# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑

# ພຣະວິໄນ

## ເຫຼັ້ມທີ ໑

## ມະຫາວິພັງ ພາກ ໑



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໔໕໕໕-໔໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ๓ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๓ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑

# ພຣະວິໄນ

## ເຫຼັ້ມທີ ໑

# ມະຫາວິພັງ ພາກ ໑

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ເວຣັນຊະກັນ

## ເລື້ອງເວຣັນຊະພາມ

[໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ຄວງຕົ້ນກະເດົາອັນເປັນທີ່ຢູ່ຂອງນະເລຣຸຍັກ ເຂດເມືອງເວຣັນຊາ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ເວຣັນຊະພາມໄດ້ຟັງຂ່າວວ່າ ທ່ານພຣະສະມະນະໂຄດົມ ເປັນສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນປະທັບຢູ່ ທີ່ຄວງຕົ້ນກະເດົາອັນເປັນທີ່ຢູ່ຂອງນະເລຣຸຍັກ ເຂດເມືອງເວຣັນຊາ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ທ່ານພຣະໂຄດົມຜູ້ຈະເລີນນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຣູ້ແຈ້ງໂລກເປັນສາຣະຖີຝຶກຜູ້ທີ່ຄວນຝຶກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

ພຣະອົງຊົງຣູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະ ມະນະພາມ ເທວະດາ ແລະ ມະນຸດດ້ວຍພຣະອົງເອງແລ້ວ ຈຶ່ງຊົງປະກາດໃຫ້ຜູ້ອື່ນຣູ້ນໍາຊົງສະ ແດງທໍາມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍເຊັ່ນນີ້ ເປັນຄວາມດີຢ່າງແທ້ຈິງ

## ເວຣັນຊະພາມກ່າວຕຳໜິພຣະຜູ້ມີພຣະພາກເຈົ້າ

[๘] ຕໍ່ມາ ເວຣັນຊະພາມເດີນທາງໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ລະນຶກເຖິງກັນແລະກັນ ແລ້ວນັ່ງໃນທີ່ສົມຄວນ ຂາບທູນວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຮູ້ມາວ່າ ພຣະສະມະນະໂຄດົມບໍ່ຍອມໄຫວ້ ບໍ່ລຸກຮັບພວກພາມຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ຫຼື ບໍ່ເຊື້ອເຊີນໃຫ້ນັ່ງ ເລື້ອງທີ່ຂ້າພະເຈົ້າໄດ້ຮູ້ມານັ້ນຈິງຢ່າງແນ່ນອນ ການທີ່ທ່ານພຣະໂຄດົມປະພຶດເຊັ່ນນັ້ນບໍ່ສົມຄວນເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ເຮົາຍັງບໍ່ເຫັນໃຜບໍ່ວ່າໃນໂລກໃດ ໆ ໃນບໍລິສັດໃດ ໆ ທີ່ເຮົາຄວນຈະໄຫວ້ ລຸກຮັບ ຫຼື ເຊື້ອເຊີນໃຫ້ນັ່ງ ຍ້ອນວ່າ ຖ້າຕະຖາຄົດໄຫວ້ ລຸກຮັບ ຫຼື ເຊື້ອເຊີນຜູ້ໃດໃຫ້ນັ່ງແລ້ວ ຫົວຂອງຜູ້ນັ້ນຈະຕ້ອງຂາດຕົກໄປ"

[๙] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ເປັນຄົນບໍ່ມີຣົດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນຕະຖາຄົດລະຣົດຊາດ ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະໄດ້ໝົດສິ້ນແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[໑໐] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ເປັນຄົນບໍ່ມີສົມບັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນຕະຖາຄົດລະສົມບັດຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະໄດ້ໝົດສິ້ນແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[໑໑] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ສອນບໍ່ໃຫ້ເຮັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນເຮົາສອນບໍ່ໃຫ້ເຮັດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຕະຫຼອດເຖິງການບໍ່ໃຫ້ເຮັດບາບອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[໑໒] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ສອນໃຫ້ທຳລາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນເຮົາສອນໃຫ້ທຳລາຍຣາຄະ ໂທສະ ໂມຫະ ຕະຫຼອດເຖິງໃຫ້ທຳລາຍບາບອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[៧] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ເປັນຄົນຊ່າງລັງກຽດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນເຮົາຊ່າງລັງກຽດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ແລະບາບອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[៨] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ເປັນຄົນຊ່າງກຳຈັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນເຮົາສະແດງທຳເພື່ອກຳຈັດຣາຄະ ໂທສະ ໂມຫະ ແລະບາບອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[៩] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ເປັນຄົນຊ່າງເຜົາຜານ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນເຮົາກ່າວເຖິງບາບອະກຸສົນທຳທັງຫຼາຍ ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດວ່າເປັນສິ່ງທີ່ຄວນເຜົາຜານ ພາມ ເຮົາຮຽກຄົນທີ່ລະບາບອະກຸສົນທຳທັງຫຼາຍທີ່ຄວນເຜົາຜານ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າ ເປັນຄົນຊ່າງເຜົາຜານ ຕະຖາຄົດລະບາບອະກຸສົນທຳຕ່າງ ໆ ທີ່ຄວນເຜົາຜານໄດ້ໝົດສິ້ນ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

[໑໐] ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມ ເປັນຄົນບໍ່ຜຸດບໍ່ເກີດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ຍ້ອນເຮົາຮຽກຄົນທີ່ລະການຢູ່ໃນທ້ອງແລະການເກີດໃໝ່ໄດ້ໝົດ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ວ່າ ເປັນຄົນບໍ່ຜຸດບໍ່ເກີດ ຕະຖາຄົດລະການ ຢູ່ໃນທ້ອງ ແລະການເກີດໃໝ່ໄດ້ໝົດສິ້ນແລ້ວ ຂໍ້ທີ່ເຂົາກ່າວຫາເຮົານັ້ນມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

## ຊົງອຸປະມາດ້ວຍໄກ່ນ້ອຍ

[໑໑] "ພາມ ໄຂ່ ៨ ໜ່ວຍ ໑໐ ໜ່ວຍ ຫຼື ໑໒ ໜ່ວຍ ທີ່ແມ່ໄກ່ໝູບ ຫຼື ຟັກດີແລ້ວ ໄກ່ນ້ອຍຕົວທີ່ໃຊ້ເລັບ ຫຼື ຈະງອຍປາກທຳລາຍປີ້ໄຂ່ອອກມາໄດ້ກ່ອນ ຄວນຮຽກມັນວ່າ ເປັນຕົວອ້າຍ ຫຼື ຕົວນ້ອງ" "ຄວນຮຽກວ່າ ອ້າຍ ຍ້ອນມັນອອກມາກ່ອນ"

"ເຊັ່ນດຽວກັນນັ້ນແລພາມ ໃນຂະນະທີ່ໝູ່ສັດ ຖືກປີ້ໄຂ່ ຄື ອະວິດຊາຫໍ່ຫຸ້ມຢູ່ ເຮົາໄດ້ທຳລາຍປີ້ໄຂ່ ຄື ອະວິດຊາ ຜູ້ດຽວເທົ່ານັ້ນສຳເລັດອະນຸດຕະຣະສຳມາສຳໂພທິຍານອັນປະເສີດຈຶ່ງເປັນອ້າຍໃຫຍ່ຜູ້ປະເສີດທີ່ສຸດຂອງໂລກ

## ຊານ ໔

ພາມ ເຮົາຜາຣົບຄວາມພຽນ ບໍ່ທຍໍ້ທຍ່ອນ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີ ກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ

## ປະຖົມຊານ

ເຮົາສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່

## ທຸຕິຍະຊານ

ຍ້ອນວິຕົກ ວິຈານສະງົບລະງັບໄປແລ້ວ ເຮົາບັນລຸທຸຕິຍະຊານ ມີຄວາມຜ່ອງໄສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິເທົ່ານັ້ນຢູ່

## ຕະຕິຍະຊານ

ຍ້ອນປີຕິຈາງຄາຍອອກແລ້ວ ເຮົາມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ໄດ້ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ

## ຈະຕຸດຖະຊານ

ຍ້ອນລະສຸກແລະທຸກໄດ້ແລ້ວ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ເຮົາໄດ້ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່"

## ວິດຊາ ໑

## ປຸບເພນິວາສານຸສະຕິຍານ

[໑໘] "ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າ ໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ເຮົານັ້ນ ໄດ້ນ້ອມຈິດໄປເພື່ອປຸບເພນິວາສານຸສະຕິຍານ ລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບແດ່

ຕະຫຼອດວິວັດຕະກັບແດ່ ຕະຫຼອດສັງວັດຕະກັບ ແລະ ວິວັດຕະກັບແດ່ ຫຼາຍກັບວ່າ ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ມີຊື່ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້ ເຮົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

ພາມ ເຮົາໄດ້ບັນລຸວິດຊາທີ ໑ ໃນຍາມທຳອິດແຫ່ງຣາຕີ ຄວາມມືດມິດ ຄື ອະວິດຊາ ເຮົາກຳຈັດໄດ້ແລ້ວ ແສງສະຫວ່າງ ຄື ວິດຊາໄດ້ເກີດຂຶ້ນແກ່ເຮົາ ປຽບເໝືອນແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ພາມ ນີ້ຄືການເຈາະປົ້ໄຂ່ຄືອະວິດຊາອອກມາຄັ້ງ ທີ ໑ ຂອງເຮົາ ເໝືອນການເຈາະອອກຈາກປົ້ໄຂ່ຂອງໄກ່ນ້ອຍ"

## ຈຸຕູປະປາຕະຍານ

[໑໓] "ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າ ໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນບໍ່ຫວັ່ນໄຫວແນວນີ້ ເຮົານັ້ນໄດ້ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງອຸບັດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເຮົາຮູ້ຊັດແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປບັງເກີດໃນອະບາຍ ທຸກຄະຕິວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປບັງເກີດໃນສຸຄະຕິໂລກສະຫວັນ

ພາມ ເຮົາໄດ້ບັນລຸວິດຊາທີ ໒ ໃນຍາມທີ ໒ ແຫ່ງຣາຕີ ຄວາມມືດມິດ ຄື ອະວິດຊາ ເຮົາກຳຈັດໄດ້ແລ້ວ ແສງສະຫວ່າງ ຄື ວິດຊາໄດ້ເກີດຂຶ້ນແກ່ເຮົາ ປຽບເໝືອນແສງສະຫວ່າງເກີດແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່

ພາມ ນີ້ຄືການເຈາະປົ້ໄຂ່ ຄື ອະວິດຊາອອກມາຄັ້ງທີ ໒ ຂອງເຮົາ ເໝືອນການເຈາະອອກຈາກປົ້ໄຂ່ຂອງໄກ່ນ້ອຍ"

## ອາສະວັກຂະຍະຍານ

[໑໔] "ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າ ໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ເຮົານັ້ນໄດ້ນ້ອມຈິດໄປເພື່ອອາສະວັກຂະຍະຍານ ໄດ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກ

ຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣທະ ນີ້ ອາສະວະນິໂຣທະຄາມີນີປະຕິປະທາ ເມື່ອເຮົາຮູ້ເຫັນຢູ່ແນວນີ້ ຈິດໄດ້ລຸດພົ້ນຈາກກາມາສະວະ ພະວາສະວະ ອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ຊັດແຈ້ງວ່າ ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພາມ ເຮົາໄດ້ບັນລຸວິດຊາທີ ໓ ໃນຍາມທີ ໓ ແຫ່ງຣາຕີ ຄວາມມືດມິດ ຄື ອະວິດຊາເຮົາກຳຈັດໄດ້ແລ້ວ ແສງສະຫວ່າງ ຄື ວິດຊາໄດ້ເກີດຂຶ້ນແກ່ເຮົາ ປຽບເໝືອນແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່

ພາມ ນີ້ຄືການເຈາະປົ້ໄຂ່ ຄື ອະວິດຊາອອກມາຄັ້ງທີ ໓ ຂອງເຮົາ ເໝືອນການເຈາະອອກຈາກປົ້ໄຂ່ຂອງໄກ່ນ້ອຍ”

## ເວຣັນຊະພາມສະແດງຕົນເປັນອຸປາສົກ

[໑໘] ເມື່ອຕັດແນວນີ້ ເວຣັນຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ທ່ານພຣະໂຄດົມເປັນອ້າຍໃຫຍ່ ຜູ້ປະເສີດທີ່ສຸດ ທ່ານພຣະໂຄດົມ ພາສິດຂອງພຣະອົງຊັດເຈນໄພເລາະມ່ວນຫຼາຍ ທ່ານພຣະໂຄດົມ ພາສິດຂອງພຣະອົງຊັດເຈນໄພເລາະມ່ວນຫຼາຍ ພຣະອົງຊົງປະກາດທຳແຈ້ງຊັດ ໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ປິດບອກທາງແກ່ຜູ້ຫຼົງທາງ ຫຼື ໄຕ້ປະທີບໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ແລະຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງຊົງຮັບຄຳນິມົນຂອງຂ້າພຣະອົງ ຢູ່ຈຳພັນສາທີ່ເມືອງເວຣັນຊາດ້ວຍເທີ້ນ”

ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳນິມົນໂດຍດຸດສະນີພາບ ເມື່ອເວຣັນຊະພາມຮູ້ວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຂຶ້ນຈາກອາສະນະຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຈາກໄປ

## ເມືອງເວຣັນຊາເກີດທຸບພິກຂະໄພ

[໑໙] ສະໄໝນັ້ນ ເມືອງເວຣັນຊາເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ຂັດສົນຕ້ອງໄດ້ໃຊ້ສະລາກປັນສ່ວນຊື້ອາຫານ ມີຄົນລົ້ມຕາຍກະດູກຂາວຈູ່ມພູ່ມ ເປັນການຍາກທີ່ພຣະອະຣິຍະທັງຫຼາຍຈະບິນທະບາດລ້ຽງຊີບໄດ້

ຕໍ່ມາ ພວກພໍ່ຄ້າມ້າຊາວເມືອງອຸດຕະຣະປະຖະ ມີມ້າຢູ່ປະມານ ໕໐໐ ໂຕ ເຂົ້າພັກແຮມໃນລະດູຝົນໃນເມືອງເວຣັນຊາ ພວກເຂົາກະກຽມເຂົ້າຕາກ ເພື່ອຖວາຍພຣະພິກຂຸອົງລະປະມານ

໑ ທະນານໄວ້ທີ່ຄອກມ້າ ຮຸ່ງເຊົ້າ ພິກຂຸທັງຫຼາຍຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນໄປບິນທະບາດໃນເມືອງເວຣັນຊາ ບິນທະບາດບໍ່ໄດ້ຫຍັງມາເລີຍ ຈຶ່ງໄປທີ່ຄອກມ້າ ຮັບເຂົ້າຕາກອົງລະປະມານ ໑ ທະນານ ນຳໄປຕຳໃຫ້ລະອຽດແລ້ວສັນ ສ່ວນພຣະອານົນບົດເຂົ້າຕາກປະມານ ໑ ທະນານເທິງຫີນບົດແລ້ວນ້ອມເຂົ້າໄປຖວາຍພຣະຜູ້ມີພຣະພາກເຈົ້າ ພຣະອົງສະເຫວີຍເຂົ້ານັ້ນ

## ພຸດທະປະເພນີ

ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະດັບສຽງຄົກ ພຣະຕະຖາຄົດເຈົ້າທັງຫຼາຍຊົງຮູ້ເລື້ອງ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື້ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື້ອງທີບໍ່ເປັນປະໂຫຍດ ຍ້ອນພຣະຕະຖາຄົດເຈົ້າທັງຫຼາຍຊົງກຳຈັດເລື້ອງທີ່ບໍ່ເປັນປະໂຫຍດອອກດ້ວຍອະຣິຍະມັກແລ້ວ ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍສອບຖາມພິກຂຸທັງຫຼາຍດ້ວຍເຫດ ໔ ປະການ ຄື ຈະຊົງສະແດງທຳຢ່າງໜຶ່ງ ຈະຊົງບັນຍັດສິກຂາບົດແກ່ພຣະສາວົກຢ່າງໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພຣະອານົນມາຮັບສັ່ງຖາມວ່າ "ນັ້ນສຽງຄົກແມ່ນບໍ ອານົນ"

ພຣະອານົນຈຶ່ງຂາບທູນເລື້ອງນັ້ນໃຫ້ຊົງຊາບ

"ອານົນ ດີແລ້ວ ໆ ພວກທ່ານເປັນສັດຕະບຸຣຸດ ຊະນະໄດ້ເດັດຂາດແລ້ວ ເຂົ້າສາລີມີຊີ້ນເພື່ອນພົມມະຈາຣີໃນພາຍຫຼັງຈະພາກັນດູໝິ່ນ"

## ພຣະມະຫາໂມກຄັນລານະເປ່ງສີຫະນາດ

[໑ໆ] ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງ ໃນທີ່ສົມຄວນທ່ານພຣະມະຫາໂມກຄັນລານະຜູ້ນັ່ງຢູ່ໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ເວລານີ້ເມືອງເວຣັນຊາເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ຂັດສົນ ໃຊ້ສະລາກປັນສ່ວນຊື້ອາຫານ ມີຄົນລົ້ມຕາຍກະດູກຂາວຈູ່ນພູ່ນ ຍາກທີ່ພຣະອະຣິຍະເຈົ້າຈະບິນທະບາດລ້ຽງຊີບໄດ້ຂ້າແຕ່ພຣະອົງຜູ້ຈະເລີນ ພື້ນດິນໃຕ້ມະຫາປະຖະພີນີ້ມີໂອຊະ ມີຣົດແຊບ ເໝືອນນ້ຳຫົວມິ້ມທີ່ບໍ່ມີໂຕອ່ອນ ຂໍປະທານພຣະວະໂຣກາດ ຂ້າພຣະອົງຈະປີ້ນແຜ່ນດິນ ເພື່ອໃຫ້ພິກຂຸທັງຫຼາຍໄດ້ສັນງ້ວນດິນ"

"ໃນແຜ່ນດິນມີສັດອາໄສຢູ່ ທ່ານຈັກເຮັດແນວໃດກັບສັດເຫຼົ່ານັ້ນ ໂມກຄັນລານະ"

"ຂ້າພຣະອົງຈັກເນຣະມິດຝ່າມືຂ້າງໜຶ່ງໃຫ້ເປັນເຊັ່ນແຜ່ນດິນໃຫຍ່ ຍ້າຍເຫຼົ່າສັດທີ່ອາໄສແຜ່ນດິນຢູ່ໄປລວມກັນຢູ່ໃນຝ່າມື ແລ້ວໃຊ້ມືອີກຂ້າງໜຶ່ງປີ້ນແຜ່ນດິນ ຂ້ານ້ອຍ"

"ຢ່າເລີຍ ໂມກຄັນລານະ ທ່ານຢ່າພໍໃຈທີ່ຈະປີ້ນແຜ່ນດິນເລີຍ ໝູ່ສັດຈະເຂົ້າໃຈຜິດໄດ້"

"ຂໍປະທານພຣະອະໂຣກາດໃຫ້ພິກຂຸສົງທຸກອົງ ໄປບິນທະບາດໃນອຸດຕະຣະກຸຣຸທະວີບ ເທີ້ນ ຂ້ານ້ອຍ"

"ທ່ານຈັກເຮັດແນວໃດກັບພິກຂຸທີ່ບໍ່ມີລິດ"

"ຂ້າພຣະອົງຈັກເຮັດໃຫ້ພິກຂຸສົງທຸກອົງໄປໄດ້ ຂ້ານ້ອຍ"

"ຢ່າເລີຍ ໂມກຄັນລານະ ທ່ານຢ່າພໍໃຈການທີ່ຈະພາພິກຂຸສົງທຸກອົງໄປບິນທະບາດທີ່ອຸດຕະຣະກຸຣຸທະວີບເລີຍ"

## ພຣະສາຣີບຸດທູນຖາມເຖິງເຫດທີ່ເຮັດໃຫ້ພົມມະຈັນດຳລົງຢູ່ດົນແລະບໍ່ດົນ

[໑໗] ຄັ້ງນັ້ນ ທ່ານພຣະສາຣີບຸດຫຼີບຫຼີກຢູ່ໃນທີ່ສະຫງັດ ຮໍ່າເພິງຂຶ້ນມາແນວນີ້ວ່າ "ພົມມະຈັນຂອງພຣະຜູ້ມີພຣະພາກພຸດທະເຈົ້າພຣະອົງໃດດຳລົງຢູ່ບໍ່ດົນ ຂອງພຣະຜູ້ມີພຣະພາກພຸດທະເຈົ້າພຣະອົງໃດດຳລົງຢູ່ດົນ" ເມື່ອເວລາແລງຈຶ່ງອອກຈາກທີ່ພັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງໃນທີ່ສົມຄວນ ທ່ານພຣະສາຣີບຸດຜູ້ນັ່ງຢູ່ ໃນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ເກີດຄວາມຮໍ່າເພິງຂຶ້ນມາແນວນີ້ວ່າ "ພົມມະຈັນຂອງພຣະຜູ້ມີພຣະພາກພຸດທະເຈົ້າພຣະອົງໃດດຳລົງຢູ່ບໍ່ດົນ ຂອງພຣະຜູ້ມີພຣະພາກພຸດທະເຈົ້າພຣະອົງໃດດຳລົງຢູ່ດົນ" ພົມມະຈັນຂອງພຣະຜູ້ມີພຣະພາກພຸດທະເຈົ້າພຣະອົງໃດດຳລົງຢູ່ບໍ່ດົນ ຂອງພຣະຜູ້ມີພຣະພາກພຸດທະເຈົ້າພຣະອົງໃດດຳລົງຢູ່ດົນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສາຣີບຸດ ພົມມະຈັນຂອງພຣະພຸດທະເຈົ້າວິປັດສີ ພຣະພຸດທະເຈົ້າສິຂີ ພຣະພຸດທະເຈົ້າເວດສະພູ ດຳລົງຢູ່ບໍ່ດົນ ພົມມະຈັນຂອງພຣະພຸດທະເຈົ້າກະກຸສັນທະ ພຣະພຸດທະເຈົ້າໂກນາຄະມະນະ ແລະພຣະພຸດທະເຈົ້າກັດສະປະ ດຳລົງຢູ່ດົນ"

[໑໘] "ມີອັນໃດເປັນເຫດເປັນປັດໄຈເຮັດໃຫ້ພົມມະຈັນຂອງພຣະພຸດທະເຈົ້າວິປັດສີ ພຣະພຸດທະເຈົ້າສິຂີ ແລະພຣະພຸດທະເຈົ້າເວດສະພູ ດຳລົງຢູ່ບໍ່ດົນ ຂ້ານ້ອຍ"

"ສາຣີບຸດ ພຣະພຸດທະເຈົ້າວິປັດສີ ພຣະພຸດທະເຈົ້າສິຂີ ພຣະພຸດທະເຈົ້າເວດສະພູ ຊົງເອົາໃຈໃສ່ທີ່ຈະສະແດງທຳໂດຍພິສະດານແກ່ສາວົກ ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ຂອງພຣະພຸດທະເຈົ້າທັງ ໓ ພຣະອົງຈຶ່ງມີໜ້ອຍ ບໍ່ໄດ້ຊົງບັນຍັດສິກຂາບົດໄວ້ແກ່ສາວົກ ບໍ່ມີການສະແດງປາຕິໂມກ ເມື່ອໝົດພຣະພຸດທະເຈົ້າແລະສາວົກຜູ້ຕັດສະຮູ້ຕາມແລ້ວ ສາວົກຊັ້ນຫຼັງ ໆ ຕ່າງຊື່ ຕ່າງໂຄດ ຕ່າງຊາດວັນນະ ໄດ້ເຂົ້າມາບວດຈາກຕ່າງຕະກູນ ທ່ານເຫຼົ່ານັ້ນພາໃຫ້ພົມມະຈັນສູນສິ້ນໝົດໄປທັນທີເໝືອນດອກໄມ້ນານາພັນກອງຢູ່ເທິງແຜ່ນແປ້ນ ຍັງບໍ່ຮ້ອຍດ້ວຍດ້າຍ ຍ່ອມຖືກລົມພັດ

ກະຈັດກະຈາຍໄປ ຍ້ອນເຫດໃດ ຍ້ອນບໍ່ໄດ້ເອົາດ້າຍຮ້ອຍໄວ້ ຂໍ້ນີ້ສັນໃດ ເມື່ອໝົດພຣະພຸດທະເຈົ້າແລະສາວົກຜູ້ຕັດສະຣູ້ຕາມແລ້ວ ສາວົກຊັ້ນຫຼັງ ໆ ຕ່າງຊື່ ຕ່າງໂຄດ ຕ່າງຊາດວັນນະ ໄດ້ເຂົ້າມາບວດຈາກຕ່າງຕະກູນ ທ່ານເຫຼົ່ານັ້ນພາໃຫ້ພົມມະຈັນສູນສິ້ນໝົດໄປທັນທີສັນນັ້ນ

ອັນໜຶ່ງ ພຣະພຸດທະເຈົ້າເຫຼົ່ານັ້ນ ບໍ່ຊົງເອົາໃຈໃສ່ທີ່ຈະກຳນົດຈິດຂອງສາວົກດ້ວຍພຣະຫະໄທແລ້ວຊົງສັ່ງສອນ ສາຣີບຸດ ເລື້ອງເຄີຍເກີດຂຶ້ນແລ້ວ ພຣະພຸດທະເຈົ້າເວດສະພູ ຊົງກຳນົດຈິດພິກຂຸສົງແລ້ວຊົງສັ່ງສອນພິກຂຸສົງ ໑,໐໐໐ ອົງ ໃນປ່າທີ່ເປັນຕາຢ້ານແຫ່ງໜຶ່ງວ່າ "ທ່ານທັງຫຼາຍຈົ່ງພິຈາລະນາແນວນີ້ ຢ່າພິຈາລະນາແນວນັ້ນ ຈົ່ງຕັ້ງໃຈແນວນີ້ ຢ່າຕັ້ງໃຈແນວນັ້ນ ຈົ່ງລະສິ່ງນີ້ ຈົ່ງເຂົ້າເຖິງສິ່ງນີ້ຢູ່ເທີ້ນ" ຈິດຂອງພິກຂຸ ໑,໐໐໐ ອົງ ທີ່ພຣະພຸດທະເຈົ້າເວດສະພູຊົງສັ່ງສອນ ລຸດພົ້ນຈາກອາສະວະ ຍ້ອນບໍ່ມີຄວາມຖືໝັ້ນ ສາຣີບຸດ ຍ້ອນໃນປ່າທີ່ເປັນຕາຢ້ານ ໜ້າອະເຫຍືອງ ຈຶ່ງມີເລື້ອງດັ່ງນີ້ ຄື ພິກຂຸຜູ້ບໍ່ປາສະຈາກ ຣາຄະ ເຂົ້າໄປສູ່ປ່າ ສ່ວນຫຼາຍເກີດຄວາມຢ້ານຂົນຄິງລຸກ

ສາຣີບຸດ ນີ້ຄື ເຫດປັດໄຈທີ່ເຮັດໃຫ້ພົມມະຈັນຂອງພຣະພຸດທະເຈົ້າວິປັດສີ ພຣະພຸດທະເຈົ້າສິຂີ ພຣະພຸດທະເຈົ້າເວດສະພູດຳລົງຢູ່ບໍ່ດົນ"

[໔໐] "ມີອັນໃດເປັນເຫດເປັນປັດໄຈເຮັດໃຫ້ພົມມະຈັນຂອງພຣະພຸດທະເຈົ້າກະກຸສັນທະ ພຣະພຸດທະເຈົ້າໂກນາຄະມະນະ ແລະພຣະພຸດທະເຈົ້າກັດສະປະດຳລົງຢູ່ໄດ້ດົນ ຂ້ານ້ອຍ"

"ສາຣີບຸດ ພຣະພຸດທະເຈົ້າກະກຸສັນທະ ພຣະພຸດທະເຈົ້າໂກນາຄະມະນະ ແລະພຣະພຸດທະເຈົ້າກັດສະປະ ບໍ່ຊົງລະເລີຍທີ່ຈະຊົງສະແດງທຳໂດຍພິສະດານແກ່ສາວົກ ສຸດຕະ ເຄີຍຍະເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະຂອງພຣະພຸດທະເຈົ້າ ໓ ພຣະອົງຈຶ່ງມີຫຼາຍ ຊົງບັນຍັດສິກຂາບົດໄວ້ແກ່ສາວົກ ມີການສະແດງປາຕິໂມກ ເມື່ອໝົດພຣະພຸດທະເຈົ້າແລະສາວົກຜູ້ຕັດສະຣູ້ຕາມແລ້ວ ສາວົກຊັ້ນຫຼັງ ໆ ຕ່າງຊື່ ຕ່າງໂຄດ ຕ່າງຊາດວັນນະ ໄດ້ເຂົ້າມາບວດຈາກຕ່າງຕະກູນ ທ່ານເຫຼົ່ານັ້ນພາໃຫ້ພົມມະຈັນດຳລົງຢູ່ດົນນານເໝືອນດອກໄມ້ນານາພັນກອງຢູ່ເທິງແຜ່ນແປ້ນເອົາດ້າຍຮ້ອຍໄວ້ ຍ່ອມບໍ່ຖືກລົມພັດກະຈັດກະຈາຍໄປ ຍ້ອນເຫດໃດ ຍ້ອນເອົາດ້າຍຮ້ອຍໄວ້ ຂໍ້ນີ້ສັນໃດ ເມື່ອໝົດພຣະພຸດທະເຈົ້າ ແລະສາວົກຜູ້ຕັດສະຣູ້ຕາມແລ້ວ ສາວົກຊັ້ນຫຼັງ ໆ ຕ່າງຊື່ ຕ່າງໂຄດ ຕ່າງຊາດວັນນະ ໄດ້ເຂົ້າມາບວດຈາກຕ່າງຕະກູນ ທ່ານເຫຼົ່ານັ້ນພາໃຫ້ພົມມະຈັນດຳລົງຢູ່ໄດ້ດົນນານສັນນັ້ນ

ສາຣີບຸດ ນີ້ຄືເຫດປັດໄຈທີ່ເຮັດໃຫ້ພົມມະຈັນຂອງພຣະພຸດທະເຈົ້າກະກຸສັນທະ ພຣະພຸດທະເຈົ້າໂກນາຄະມະນະ ແລະພຣະພຸດທະເຈົ້າກັດສະປະ ດຳລົງຢູ່ໄດ້ດົນ"

# ຊົງຜາຣົບເຫດທີ່ຈະບັນຍັດສິກຂາບົດ

[໔໑] ລຳດັບນັ້ນ ທ່ານພຣະສາຣີບຸດລຸກຂຶ້ນຄຸມຜ້າບ່ຽງບ່າປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າຂາບທູນວ່າ "ເຖິງເວລາແລ້ວ ຂ້ານ້ອຍ ທີ່ພຣະຜູ້ມີພຣະພາກເຈົ້າຈະຊົງບັນຍັດສິກຂາບົດ ຊົງຍົກປາຕິໂມກຂຶ້ນສະແດງແກ່ພຣະສາວົກອັນຈະເປັນເຫດໃຫ້ພົມມະຈັນດຳລົງຢູ່ໄດ້ຍືນຍາວ"

"ຈົ່ງຖ້າໄປກ່ອນເທີ້ນສາຣີບຸດ ຕະຖາຄົດຮູ້ເວລາໃນເລື້ອງທີ່ຈະບັນຍັດສິກຂາບົດນັ້ນ ສາດສະດາຈະຍັງບໍ່ບັນຍັດສິກຂາບົດແກ່ສາວົກ ບໍ່ຍົກປາຕິໂມກຂຶ້ນສະແດງ ຕະຫຼອດເວລາທີ່ຍັງບໍ່ເກີດອາສະວັດຖານີຍະທຳ ບາງຢ່າງໃນສົງ ເມື່ອເກີດອາສະວັດຖານີຍະທຳບາງຢ່າງໃນສົງ ຕະຖາຄົດຈຶ່ງຈະບັນຍັດສິກຂາບົດ ຈະຍົກປາຕິໂມກຂຶ້ນສະແດງແກ່ສາວົກ ເພື່ອກຳຈັດທຳເຫຼົ່ານັ້ນ

ສາຣີບຸດ ອາສະວັດຖານີຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບເທົ່າທີ່ສົງຍັງບໍ່ເປັນໝູ່ໃຫຍ່ຍ້ອນມີພິກຂຸບວດດົນ ເມື່ອສົງເປັນໝູ່ໃຫຍ່ຍ້ອນມີພິກຂຸບວດດົນ ແລະ ມີອາສະວັດຖານີຍະທຳບາງຢ່າງເກີດໃນສົງ ຕະຖາຄົດຈະບັນຍັດສິກຂາບົດ ຈະຍົກປາຕິໂມກຂຶ້ນສະແດງແກ່ສາວົກ ເພື່ອກຳຈັດທຳເຫຼົ່ານັ້ນ

ສາຣີບຸດ ອາສະວັດຖານີຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບເທົ່າທີ່ສົງຍັງ ບໍ່ເປັນໝູ່ໃຫຍ່ຍ້ອນແຜ່ຫຼາຍ ເມື່ອສົງເປັນໝູ່ໃຫຍ່ຍ້ອນແຜ່ຫຼາຍ ແລະ ມີອາສະວັດຖານີຍະທຳບາງຢ່າງເກີດໃນສົງ ຕະຖາຄົດຈະບັນຍັດສິກຂາບົດ ຈະຍົກປາຕິໂມກຂຶ້ນສະແດງແກ່ສາວົກ ເພື່ອກຳຈັດທຳເຫຼົ່ານັ້ນ

ສາຣີບຸດ ອາສະວັດຖານີຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບເທົ່າທີ່ສົງຍັງບໍ່ເປັນໝູ່ໃຫຍ່ຍ້ອນມີລາບສັກກາຣະຫຼາຍ ເມື່ອສົງເປັນໝູ່ໃຫຍ່ຍ້ອນມີລາບສັກກາຣະຫຼາຍ ແລະມີອາສະວັດຖານີຍະທຳບາງຢ່າງເກີດໃນສົງ ຕະຖາຄົດຈະບັນຍັດສິກຂາບົດ ຈະຍົກປາຕິໂມກຂຶ້ນສະແດງແກ່ສາວົກ ເພື່ອກຳຈັດທຳເຫຼົ່ານັ້ນ

ສາຣີບຸດ ອາສະວັດຖານີຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບເທົ່າທີ່ສົງຍັງບໍ່ເປັນໝູ່ໃຫຍ່ຍ້ອນຄວາມເປັນພະຫູສູດ ເມື່ອສົງເປັນໝູ່ໃຫຍ່ຍ້ອນຄວາມເປັນພະຫູສູດ ແລະມີອາສະວັດຖານີຍະທຳບາງຢ່າງເກີດໃນສົງ ຕະຖາຄົດຈະບັນຍັດສິກຂາບົດ ຈະຍົກປາຕິໂມກຂຶ້ນສະແດງແກ່ສາວົກ ເພື່ອກຳຈັດທຳເຫຼົ່ານັ້ນ

ສາຣີບຸດ ກໍພິກຂຸສົງຍັງບໍ່ມີສະໝຽດ ບໍ່ມີໂທດ ບໍ່ມີສິ່ງມົວໝອງ ບໍລິສຸດ ຜຸດຜ່ອງ ດຳລົງຢູ່ໃນສາຣະຄຸນ ແທ້ຈິງໃນພິກຂຸ ໕໐໐ ອົງນີ້ ຜູ້ມີຄຸນນະທຳຢ່າງຕ່ຳກໍຊັ້ນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສົມໂພທິໃນວັນຂ້າງໜ້າ

## ສະເດັດນິເວດເວຣັນຊະພາມ

[໔໘] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຕັດຮຽກທ່ານພຣະອານົນມາຮັບສັ່ງວ່າ "ອານົນ ພຣະຕະຖາຄົດທັງຫຼາຍຍັງບໍ່ໄດ້ບອກລາຜູ້ທີ່ນິມົນໃຫ້ຢູ່ຈຳພັນສາ ຈະບໍ່ຈາກໄປ ເລື້ອງນີ້ເປັນປະເພນີຂອງພຣະຕະຖາຄົດທັງຫຼາຍ ເຮົາຈະໄປລາເວຣັນຊະພາມ" ພຣະອານົນທູນສະໜອງພຣະພຸດທະດຳຣັດແລ້ວ

ເມື່ອແລ້ວພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ມີພຣະອານົນຕາມສະເດັດ ສະເດັດພຣະພຸດທະດຳເນີນໄປເຖິງນິເວດຂອງເວຣັນຊະພາມ ເມື່ອເຖິງແລ້ວຈຶ່ງປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍ ຊົງບອກເວຣັນຊະພາມຜູ້ມາເຝົ້າວ່າ "ທ່ານນິມົນເຮົາຢູ່ຈຳພັນສາ ເຮົາຂໍລາທ່ານ ຕ້ອງການຈະຈາຣິກໄປໃນຊົນນະບົດ"

ເວຣັນຊະພາມຂາບທູນວ່າ "ເປັນຄວາມຈິງ ຂ້າພຣະອົງນິມົນທ່ານພຣະໂຄດົມຢູ່ຈຳພັນສາ ແຕ່ຂ້າພຣະອົງຍັງບໍ່ໄດ້ຖວາຍວັດຖຸທານທີ່ໄດ້ຕັ້ງໃຈເອົາໄວ້ ສິ່ງນັ້ນບໍ່ແມ່ນຈະບໍ່ມີແລະບໍ່ແມ່ນວ່າຂ້າພຣະອົງຈະບໍ່ເຕັມໃຈຖວາຍ ໄຕຣມາດທີ່ຜ່ານມາ ພຣະອົງຍັງບໍ່ໄດ້ຮັບວັຖຸທານນັ້ນ ຍ້ອນຜູ້ຄອງເຮືອນມີກິດຫຼາຍ ມີທຸລະຫຼາຍ ຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງຈົ່ງຮັບອາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳນິມົນໂດຍດຸດສະນີພາບ ຊົງຊີ້ແຈ່ງໃຫ້ເວຣັນຊະພາມເຫັນຊັດແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວສະເດັດລຸກຈາກອາສະນະຫຼີກໄປ

ເມື່ອຜ່ານຣາຕີນັ້ນໄປ ເວຣັນຊະພາມສັ່ງໃຫ້ກະກຽມຂອງຫຍ້ຳຂອງສັນອັນປະນີດໄວ້ໃນເຮືອນແລ້ວໃຫ້ຄົນໄປຂາບທູນພັດຕະການແດ່ພຣະຜູ້ມີພຣະພາກເຈົ້າ ວ່າ "ທ່ານພຣະໂຄດົມເຖິງເວລາແລ້ວ ພັດຕາຫານສຳເລັດແລ້ວ"

[໔໙] ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດພຣະພຸດທະດຳເນີນໄປສູ່ນິເວດຂອງເວຣັນຊະພາມ ປະທັບນັ່ງເໜືອພຣະພຸດທະອາດພ້ອມພິກຂຸສົງ ເມື່ອແລ້ວເວຣັນຊະພາມປະເຄນຂອງຫຍ້ຳຂອງສັນອັນປະນີດດ້ວຍຕົວເອງຈົນວ່າພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ລະພຣະຫັດຈາກບາດ ຈຶ່ງທູນຖວາຍໄຕຣຈີວອນໃຫ້ຊົງຄອງ ແລະຖວາຍຜ້າຄູ່ໃຫ້ພິກຂຸຄອງອົງລະໄຕຣ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເວຣັນຊະພາມເຫັນຊັດແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວສະເດັດຈາກໄປ

ພຣະພຸດທະອົງປະທັບຢູ່ ໃນເມືອງເວຣັນຊາຕາມພຣະອັດທະຍາໄສແລ້ວໄດ້ສະເດັດພຣະພຸດທະດໍາເນີນໄປສູ່ເມືອງທ່າປະຍາຄະ ບໍ່ຊົງແວ່ເມືອງໂສເຣີຍຍະ ເມືອງສັງກັດສະ ເມືອງກັນນະກຸດຊະ ຊົງຂ້າມແມ່ນໍ້າຄົງຄາທີ່ເມືອງທ່າປະຍາຄະ ສະເດັດພຣະພຸດທະດໍາເນີນເຖິງນະຄອນພາຣານະສີ ເມື່ອປະທັບທີ່ນະຄອນພາຣານະສີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປໂດຍລໍາດັບຈົນເຖິງນະຄອນເວສາລີ ຊາບວ່າພຣະອົງປະທັບຢູ່ໃນກູຕາຄານສາລາປ່າມະຫາວັນ ເຂດນະຄອນເວສາລີນັ້ນ

**ເວຣັນຊະພານະວາຣະ ຈົບ**

# ໑. ປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໑

## ວ່າດ້ວຍການເສບເມຖຸນທຳ

### ສຸທິນພານະວານ

[໒໔] ສະໄໝນັ້ນ ທີ່ໝູ່ບ້ານກະລັນທະຄາມບໍ່ຫ່າງຈາກນະຄອນເວສາລີ ມີບຸດຊາຍເສດຖີຊາວກະລັນທະຄາມ ຊື່ສຸທິນ ວັນໜຶ່ງ ເຂົາມີທຸລະບາງຢ່າງຈຶ່ງເດີນທາງໄປໃນນະຄອນເວສາລີກັບໝູ່ກອງ ຂະນະນັ້ນ ພຣະຜູ້ມີພຣະພາກກຳລັງປະທັບນັ່ງສະແດງທຳທ້ອມລ້ອມດ້ວຍບໍລິສັດຈຳນວນຫຼາຍ ເຂົາໄດ້ເຫັນແລ້ວ ມີຄວາມຄິດວ່າ “ເຮັດແນວໃດນໍ ເຮົາຈຶ່ງຈະໄດ້ຟັງທຳແດ່” ຈຶ່ງເຂົ້າໄປສູ່ບໍລິສັດແລ້ວນັ່ງ ໃນທີ່ສົມຄວນ ໄດ້ມີຄວາມຄິດດັ່ງນີ້ວ່າ “ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ເຮົາເຂົ້າໃຈວ່າ “ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຢ່າງຍິ່ງເໝືອນຫອຍສັງທີ່ຂັດແລ້ວ ບໍ່ແມ່ນເຮັດໄດ້ງ່າຍ” ເອົາເທີ້ນ ເຮົາຄວນຈະແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາຍະອອກຈາກເຮືອນໄປບວດເປັນອະນາຄາຣິກ” ຕໍ່ຈາກນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ບໍລິສັດກໍລຸກຂຶ້ນ ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

[໒໕] ຫຼັງຈາກບໍລິສັດຈາກໄປບໍ່ດົນ ສຸທິນກະລັນທະບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ສຸທິນກະລັນທະບຸດຜູ້ນັ່ງໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແຕ່ພຣະອົງຜູ້ຈະເລີນ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ຂ້າພຣະອົງເຂົ້າໃຈວ່າ “ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຢ່າງຍິ່ງເໝືອນຫອຍສັງທີ່ຂັດແລ້ວ ບໍ່ແມ່ນເຮັດໄດ້ງ່າຍ” ຂ້າພຣະອົງປາຖະໜາຈະແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນມາບວດ ເປັນອະນາຄາຣິກ ຂໍພຣະຜູ້ມີພຣະພາກເຈົ້າຊົງພຣະກະລຸນາໃຫ້ຂ້າພຣະອົງບວດດ້ວຍເທີ້ນ”

“ສຸທິນ ມານດາບິດາອະນຸຍາດໃຫ້ທ່ານອອກຈາກເຮືອນບວດເປັນອະນາຄາຣິກແລ້ວບໍ?”

“ຍັງບໍ່ໄດ້ອະນຸຍາດ ຂ້ານ້ອຍ”

“ສຸທິນ ພຣະຕະຖາຄົດທັງຫຼາຍຍ່ອມບໍ່ບວດໃຫ້ກຸນລະບຸດທີ່ມານດາບິດາຍັງບໍ່ອະນຸຍາດ”

“ຂ້າພຣະອົງ ຈັກຫາວິທີໃຫ້ມານດາບິດາອະນຸຍາດໃຫ້ຂ້າພຣະອົງອອກຈາກເຮືອນມາບວດເປັນອະນາຄາຣິກ ຂ້ານ້ອຍ”

## ຂໍອະນຸຍາດອອກບວດ

[໔໖] ຕໍ່ມາ ສຸທິນກະລັນທະບຸດທຳທຸລະໃນນະຄອນເວສາລີສຳເລັດແລ້ວ ກັບໄປຫາມານດາບິດາທີ່ກະລັນທະຄາມ ເມື່ອເຖິງແລ້ວຈຶ່ງກ່າວກັບມານດາບິດາດັ່ງນີ້ວ່າ "ທ່ານພໍ່ ທ່ານແມ່ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ລູກເຂົ້າໃຈວ່າ "ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຢ່າງຍິ່ງເໝືອນຫອຍສັງທີ່ຂັດແລ້ວນີ້ບໍ່ແມ່ນເຮັດໄດ້ງ່າຍ" ລູກປາຖະໜາຈະແຖຜົມ ແຖ ໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນໄປບວດເປັນອະນາຄາຣິກ ທ່ານພໍ່ທ່ານແມ່ໂຜດອະນຸຍາດໃຫ້ລູກອອກໄປບວດເປັນອະນາຄາຣິກດ້ວຍເທີ້ນ"

ເມື່ອສຸທິນກະລັນທະບຸດກ່າວແນວນີ້ ມານດາບິດາຕອບວ່າ "ລູກສຸທິນ ເຈົ້າເປັນລູກຄົນດຽວ ເປັນທີ່ຮັກທີ່ພໍໃຈຂອງພໍ່ແລະແມ່ ຈະເລີນເຕີບໂຕມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງມາຢ່າງດີ ຄວາມທຸກຍາກໜ້ອຍໜຶ່ງລູກກໍຍັງບໍ່ຮູ້ຈັກ ເຖິງລູກຈະຕາຍໄປ ພໍ່ແລະແມ່ ກໍບໍ່ປາຖະໜາຈະຈາກ ແລ້ວເປັນຫຍັງ ພໍ່ແລະແມ່ຈະຍອມໃຫ້ລູກຜູ້ຍັງມີຊີວິດຢູ່ອອກຈາກເຮືອນໄປບວດເປັນອະນາຄາຣິກນໍ?"

ສຸທິນກະລັນທະບຸດໄດ້ກ່າວກັບມານດາບິດາດັ່ງນີ້ເປັນຄັ້ງທີ ໒ ຯລຯ ເປັນຄັ້ງທີ ໓ ຯລຯ ແມ່ນຄັ້ງທີ ໓ ມານດາບິດາກໍຕອບວ່າ "ລູກສຸທິນ ເຈົ້າເປັນລູກຄົນດຽວ ຯລຯ ເປັນຫຍັງ ພໍ່ແມ່ຈະຍອມໃຫ້ລູກຜູ້ຍັງມີຊີວິດຢູ່ອອກຈາກເຮືອນໄປບວດເປັນອະນາຄາຣິກນໍ?"

[໔໗] ລຳດັບນັ້ນ ສຸທິນກະລັນທະບຸດວິຕົກວ່າ ມານດາບິດາບໍ່ອະນຸຍາດໃຫ້ເຮົາບວດແນ່ນອນ ຈຶ່ງນອນເທິງພື້ນທີ່ບໍ່ມີເຄື່ອງປູລາດ ໃນທີ່ນັ້ນເອງ ຕັດສິນໃຈວ່າ ເຮົາຈັກຕາຍ ຫຼື ຈັກໄດ້ບວດກໍຢູ່ນີ້ແລ ແລະແລ້ວເຂົາກໍອົດອາຫານໄປຢ່າງຕໍ່ເນື່ອງ ຕັ້ງແຕ່ ໑ ມື້ ໒ ມື້ ໓ ມື້ ໔ ມື້ ໕ ມື້ ໖ ມື້ ຈົນເຖິງ ໗ ມື້

## ມານດາບິດາບໍ່ອະນຸຍາດ

[໔໘] ເຖິງຈັ່ງຊັ້ນ ມານດາບິດາຂອງເຂົາກໍຍັງຄົງຢືນຢັນວ່າ "ລູກສຸທິນ ເຈົ້າເປັນລູກຄົນດຽວ ເປັນທີ່ຮັກທີ່ພໍໃຈຂອງພໍ່ແລະແມ່ ຈະເລີນເຕີບໂຕມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງມາຢ່າງດີ ຄວາມທຸກຍາກໜ້ອຍໜຶ່ງ ລູກກໍຍັງບໍ່ຮູ້ຈັກ ເຖິງລູກຈະຕາຍໄປ ພໍ່ແມ່ກໍບໍ່ປາຖະໜາຈະຈາກ ແລ້ວເປັນຫຍັງພໍ່ແມ່ຈະຍອມໃຫ້ລູກຜູ້ຍັງມີຊີວິດຢູ່ອອກຈາກເຮືອນໄປບວດເປັນອະນາຄາຣິກໄດ້ນໍ ລຸກຂຶ້ນເທີ້ນ ລູກສຸທິນ ຈົ່ງກິນ ຈົ່ງດື່ມ ຈົ່ງລື່ນເລີງ ຈົ່ງພໍໃຈກິນ ດື່ມ ລື່ນເລີງ ໃຊ້ສອຍໂພຄະຊັບເຮັດບຸນເທີ້ນ ເຖິງແນວໃດ ພໍ່ແມ່ກໍຈະບໍ່ອະນຸຍາດໃຫ້ລູກບວດແນ່ນອນ"

ເມື່ອມານດາບິດາກ່າວແນວນີ້ ສຸທິນກະລັນທະບຸດໄດ້ນິ່ງເສີຍຢູ່ ມານດາບິດາໄດ້ຢືນຢັນກັບສຸທິນກະລັນທະບຸດແມ່ນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ວ່າ "ລູກສຸທິນ ເຈົ້າເປັນລູກຄົນດຽວ

ເປັນທີ່ຮັກ ເປັນທີ່ພໍໃຈຂອງພໍ່ແມ່ ຯລຯ ລູກສຸທິນ ຈົ່ງກິນ ຈົ່ງດື່ມ ຈົ່ງລື່ນເລີງ ຈົ່ງພໍໃຈກິນ ດື່ມ ລື່ນເລີງ ໃຊ້ສອຍໂພຄະຊັບເຮັດບຸນເທີ້ນ ເຖິງຢ່າງໃດ ພໍ່ແມ່ກໍຈະບໍ່ອະນຸຍາດໃຫ້ລູກບວດແນ່ນອນ" ສຸທິນກະລັນທະບຸດກໍໄດ້ນິ່ງເປັນຄັ້ງທີ ໓

## ພວກເພື່ອນຊ່ອຍເຈຣະຈາ

ຕໍ່ມາ ພວກເພື່ອນຂອງສຸທິນກະລັນທະບຸດ ພາກັນເຂົ້າໄປຫາເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ປອບໃຈວ່າ "ສຸທິນເພື່ອນຮັກ ເພື່ອນເປັນລູກຄົນດຽວ ເປັນທີ່ຮັກທີ່ພໍໃຈຂອງພໍ່ແມ່ ຈະເລີນເຕີບໂຕມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງມາຢ່າງດີ ຄວາມທຸກຍາກໜ້ອຍໜຶ່ງ ເພື່ອນກໍຍັງບໍ່ຮູ້ຈັກ ເຖິງເພື່ອນຈະຕາຍໄປ ພໍ່ແມ່ກໍບໍ່ປາຖະໜາຈະຈາກ ແລ້ວເປັນຫຍັງພໍ່ແມ່ຈະຍອມໃຫ້ເພື່ອນຜູ້ຍັງມີຊີວິດຢູ່ອອກຈາກເຮືອນໄປບວດເປັນອະນາຄາຣິກໄດ້ນໍ ລຸກຂຶ້ນເທີ້ນ ເພື່ອນຮັກ ເພື່ອນຈົ່ງກິນ ຈົ່ງດື່ມ ຈົ່ງລື່ນເລີງ ພໍໃຈກິນ ດື່ມ ລື່ນເລີງ ໃຊ້ສອຍໂພຄະຊັບເຮັດບຸນເທີ້ນ ເຖິງຈະຢ່າງໃດ ພໍ່ແມ່ກໍບໍ່ອະນຸຍາດໃຫ້ເພື່ອນບວດແນ່ນອນ"

ເມື່ອພວກເພື່ອນກ່າວແນວນີ້ ສຸທິນກະລັນທະບຸດກໍໄດ້ແຕ່ນິ່ງເສີຍ ພວກເພື່ອນໄດ້ປອບໃຈສຸທິນກະລັນທະບຸດເປັນຄັ້ງທີ ໒ ຯລຯ ເປັນຄັ້ງທີ ໓ ວ່າ "ສຸທິນເພື່ອນຮັກ ເພື່ອນເປັນລູກຄົນດຽວ ເປັນທີ່ຮັກທີ່ພໍໃຈຂອງພໍ່ແມ່ ຯລຯ ພໍ່ແມ່ກໍບໍ່ອະນຸຍາດໃຫ້ເພື່ອນບວດແນ່ນອນ" ສຸທິນກະລັນທະບຸດກໍໄດ້ນິ່ງເສີຍເປັນຄັ້ງທີ ໓

[໒໙] ຕໍ່ມາ ພວກເພື່ອນພາກັນເຂົ້າໄປຫາມານດາບິດາຂອງສຸທິນກະລັນທະບຸດເຖິງທີ່ຢູ່ ກ່າວວ່າ "ທ່ານພໍ່ທ່ານແມ່ ສຸທິນນອນເທິງພື້ນທີ່ບໍ່ມີເຄື່ອງປູລາດຕັດສິນໃຈວ່າ ເຮົາຈັກຕາຍ ຫຼືຈັກໄດ້ບວດກໍຢູ່ນີ້ແລ ຖ້າທ່ານພໍ່ທ່ານແມ່ບໍ່ຍອມໃຫ້ເຂົາບວດ ເຂົາຈັກຕາຍ ໃນທີ່ກົງນັ້ນແນ່ນອນ ແຕ່ຖ້າຍອມໃຫ້ເຂົາອອກບວດ ທ່ານພໍ່ທ່ານແມ່ ກໍຍັງຈະໄດ້ພົບເຫັນເຂົາແມ່ນບວດແລ້ວ ຖ້າເມື່ອເຂົາບໍ່ຍິນດີຈະບວດຢູ່ຕໍ່ໄປ ເຂົາຈະມີທາງໄປຢູ່ໄສໄດ້ອີກນໍ ຈະຕ້ອງກັບມາເອງຢ່າງແນ່ນອນ ຈົ່ງອະນຸຍາດໃຫ້ເຂົາບວດເທີ້ນ" ມານດາບິດາຂອງສຸທິນຈຶ່ງກ່າວວ່າ "ລູກເອີຍ ພໍ່ແລະແມ່ອະນຸຍາດໃຫ້ເຂົາບວດໄດ້"

## ສຸທິນກະລັນທະບຸດອອກບວດ

ຕໍ່ມາ ພວກເພື່ອນພາກັນເຂົ້າໄປຫາເຂົາເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບສຸທິນກະລັນທະບຸດດັ່ງນີ້ວ່າ "ລຸກຂຶ້ນເທີ້ນ ສຸທິນເພື່ອນຮັກ ມານດາບິດາອະນຸຍາດໃຫ້ເພື່ອນບວດແລ້ວ"

[໓໐] ທັນໃດນັ້ນ ສຸທິນກະລັນທະບຸດໄດ້ຂ່າວວ່າ ມານດາບິດາອະນຸຍາດໃຫ້ບວດກໍລ່າເລີງດີໃຈຫຼາຍ ລຸກຂຶ້ນມາໃຊ້ຝ່າມືເຊັດຕົວ ບຳລຸງກຳລັງຢູ່ ໒-໓ ວັນ ແລ້ວໄປເຝົ້າພຣະຜູ້ມີພຣະ

ພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງໃນທີ່ສົມຄວນ ສຸທິນກະລັນທະບຸດຜູ້ນັ່ງໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ມານດາບິດາອະນຸຍາດໃຫ້ຂ້າພຣະອົງອອກຈາກເຮືອນມາບວດເປັນອະນາຄາຣິກແລ້ວ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດບວດໃຫ້ຂ້າພຣະອົງດ້ວຍເທີ້ນ ຂ້ານ້ອຍ"

ສຸທິນກະລັນທະບຸດໄດ້ຮັບການບັນພະຊາອຸປະສົມບົດໃນສຳນັກຂອງພຣະພຸດທະເຈົ້າ ເມື່ອບວດໄດ້ບໍ່ດົນ ທ່ານພຣະສຸທິນໄດ້ຖືທຸດົງຄະວັດດັ່ງນີ້ ຄື ຢູ່ປ່າເປັນວັດ ໑ ທ່ຽວບິນທະບາດເປັນວັດ ໑ ໃຊ້ຜ້າບັງສຸກຸນເປັນວັດ ໑ ທ່ຽວບິນທະບາດໄປຕາມລຳດັບເຮືອນເປັນວັດ ໑ ພັກອາໄສຢູ່ໃກ້ໝູ່ບ້ານຊາວ ວັດຊີແຫ່ງໜຶ່ງ

## ພຣະສຸທິນກະລັນທະບຸດໄປຢ້ຽມຢາມເຮືອນ

ສະໄໝນັ້ນ ແຄວ້ນວັດຊີເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ຂັດສົນ ໃຊ້ສະລາກປັນສ່ວນຊື້ອາຫານ ລົ້ມຕາຍກັນກະດູກຂາວຈູ່ມພູ່ມ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້

ທ່ານພຣະສຸທິນໄດ້ມີຄວາມຄິດດັ່ງນີ້ວ່າ ບັດນີ້ ແຄວ້ນວັດຊີເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ຂັດສົນ ໃຊ້ສະລາກປັນສ່ວນຊື້ອາຫານ ລົ້ມຕາຍກັນກະດູກຂາວຈູ່ມພູ່ມ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້ ແຕ່ໃນນະຄອນເວສາລີ ເຮົາມີຍາດຕິພີ່ນ້ອງຢູ່ຈຳນວນຫຼາຍເຊິ່ງລ້ວນແຕ່ເປັນຄອບຄົວມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ມີເງິນມີຄຳຫຼາຍ ມີເຄື່ອງປະດັບຫຼາຍມີຊັບແລະເຂົ້າເປືອກຫຼາຍ ຢ່າຈັ່ງຊັ້ນເລີຍ ເຮົາຄວນຈະໄປອາໄສພວກຍາດຕິພີ່ນ້ອງຢູ່ ເຖິງພວກຍາດຕິພີ່ນ້ອງກໍຈະອາໄສເຮົາເຮັດບຸນຖວາຍທານ ພິກຂຸທັງຫຼາຍຈັກມີລາບ ແລະເຮົາກໍບໍ່ເດືອດຮ້ອນເລື້ອງບິນທະບາດ

ຄັ້ງນັ້ນ ທ່ານພຣະສຸທິນຈຶ່ງເກັບເສນາສະນະຖືບາດ ແລະຈີວອນແລ້ວຈາຣິກໄປທາງນະຄອນເວສາລີ ທ່ຽວຈາຣິກໄປໂດຍລຳດັບ ຈົນເຖິງນະຄອນເວສາລີ ຊາບວ່າ ທ່ານພຣະສຸທິນພັກຢູ່ ໃນກູຕາຄານສາລາປ່າມະຫາວັນ ເຂດນະຄອນເວສາລີນັ້ນ

ບັນດາຍາດຕິພີ່ນ້ອງຂອງທ່ານພໍຮູ້ຂ່າວວ່າ ພຣະສຸທິນກະລັນທະບຸດກັບມາເມືອງເວສາລີຈຶ່ງນຳອາຫານ ໖໐ ສຳລັບໄປຖວາຍ ທ່ານສະລະອາຫານທັງໝົດຖວາຍພິກຂຸທັງຫຼາຍແລ້ວຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດທີ່ໝູ່ບ້ານກະລັນທະຄາມໃນຕອນເຊົ້າທ່ຽວບິນທະບາດໄປໃນໝູ່ບ້ານກະລັນທະຄາມຕາມລຳດັບເຮືອນ ຍ່າງກົງໄປທາງເຮືອນຂອງພໍ່ອອກພໍ່

[໓໑] ພໍດີຂະນະນັ້ນ ຂ້າທາດແມ່ຍິງຂອງຍາດຕິພີ່ນ້ອງກຳລັງຈະຖິ້ມເຂົ້າໜົມກຸມມາດແຮມຄືນ ທ່ານບອກນາງທາສີນັ້ນວ່າ "ຖ້າຈະຖິ້ມສິ່ງນັ້ນ ກໍຈົ່ງຖິ້ມໃສ່ບາດຂອງອາດຕະມາເທີ້ນ" ຂະນະທີ່ນາງທາສີ ກຳລັງເຂ່ຍເຂົ້າໜົມກຸມມາດແຮມຄືນລົງບາດ ນາງຈຳເຄົ້າມື ຕີນ ແລະນ້ຳສຽງຂອງພຣະສຸທິນໄດ້ ຈຶ່ງຟ້າວເຂົ້າໄປຫາມານດາຂອງທ່ານແລ້ວກ່າວວ່າ "ຍາແມ່ ໂຜດຮູ້ເທີ້ນວ່າພຣະສຸທິນບຸດຊາຍຍາແມ່ກັບມາແລ້ວ ຂ້ານ້ອຍ"

ມານດາຂອງພຣະສຸທິນກ່າວວ່າ "ຖ້າເຈົ້າເວົ້າແທ້ ເຮົາຈະປົດເຈົ້າໃຫ້ເປັນອິດສະຫຼະ"

[໓໔] ຂະນະທີ່ທ່ານພຣະສຸທິນກຳລັງນັ່ງອີງຝາເຮືອນແຫ່ງໜຶ່ງສັນເຂົ້າໜົມກຸມມາດແຮມຄືນຢູ່ ພໍດີພໍ່ອອກພໍ່ຂອງທ່ານຍ່າງກັບຈາກເຮັດວຽກ ໄດ້ເຫັນທ່ານກຳລັງນັ່ງສັນເຂົ້າໜົມກຸມມາດແຮມຄືນຢູ່ ເມື່ອເຫັນແລ້ວຈຶ່ງກົງເຂົ້າໄປຫາເຖິງທີ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານພຣະສຸທິນດັ່ງນີ້ວ່າ "ແນວໃດສາລູກສຸທິນ ລູກຄືມາສັນເຂົ້າໜົມກຸມມາດແຮມຄືນຢູ່ແນວນີ້ ລູກຄວນກັບໄປເຮືອນຂອງລູກບໍ່ແມ່ນບໍ?"

ທ່ານພຣະສຸທິນຕອບວ່າ "ອາດຕະມາໄປຮອດເຮືອນຂອງພໍ່ອອກມາແລ້ວ ເຂົ້າໜົມກຸມມາດແຮມຄືນນີ້ກໍໄດ້ມາຈາກເຮືອນນັ້ນ"

ທັນໃດນັ້ນ ພໍ່ອອກພໍ່ໄດ້ຈັບແຂນທ່ານພຣະສຸທິນກ່າວວ່າ "ມາເທີ້ນລູກສຸທິນກັບໄປເຮືອນນຳກັນ"

ທ່ານພຣະສຸທິນຈຶ່ງຍ່າງກົງໄປເຮືອນຂອງພໍ່ອອກພໍ່ ເມື່ອເຖິງແລ້ວ ໄດ້ນັ່ງເທິງອາສະນະທີ່ເຂົາຈັດຖວາຍໃຫ້

ພໍ່ອອກພໍ່ຂອງທ່ານສຸທິນກ່າວວ່າ "ນິມົນທ່ານສັນເທີ້ນ"

"ພໍແລ້ວ ມື້ນີ້ອາດຕະມາສັນອີ່ມແລ້ວ"

"ຖ້າຈັ່ງຊັ້ນ ຂໍນິມົນ ທ່ານຮັບສັນພັດຕາຫານໃນມື້ອື່ນນີ້ເທີ້ນ"

ທ່ານພຣະສຸທິນຮັບນິມົນໂດຍດຸດສະນີພາບ ແລ້ວກໍລຸກຈາກອາສະນະຫຼີກໄປ

## ບິດາອີ່ງວອນໃຫ້ລາສິກຂາ

[໓໕] ໃນຄືນນັ້ນ ມານດາຂອງພຣະສຸທິນສັ່ງໃຫ້ເອົາມູນງົວສົດມາທາພື້ນດິນແລ້ວແບ່ງຊັບອອກເປັນ ໔ ກອງ ຄື ເງິນກອງໜຶ່ງ ຄຳກອງໜຶ່ງ ເປັນກອງໃຫຍ່ເທົ່າ ໆ ກັນ ສູງຖ້ວມຫົວ ຄົນຢືນຢູ່ຂ້າງນີ້ຈະແນມບໍ່ເຫັນຄົນຢືນຢູ່ຂ້າງນັ້ນ ຄົນຢືນຢູ່ຂ້າງນັ້ນຈະແນມບໍ່ເຫັນຄົນຢືນຢູ່ຂ້າງນີ້ ໃຊ້ສາດລຳແພນປົດກອງຊັບໄວ້ ສູນກາງຈັດອາສະນະໃຊ້ຜ້າມ່ານລ້ອມເປັນວົງສຳເລັດແລ້ວເອີ້ນອະດີດພັນລະຍາຂອງທ່ານພຣະສຸທິນມາສັ່ງວ່າ "ນາງ ເຈົ້າຈົ່ງແຕ່ງກາຍດ້ວຍອາພອນທີ່ລູກສຸທິນເຄີຍຮັກແພງພໍໃຈ" ລູກສະໃພ້ຮັບຄຳສັ່ງແມ່ຍ່າແລ້ວ

[໓໔] ພໍຮຸ່ງເຊົ້າ ທ່ານພຣະສຸທິນຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປເຖິງເຮືອນພໍ່ອອກພໍ່ ເມື່ອເຖິງແລ້ວ ໄດ້ນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ລຳດັບນັ້ນ ພໍ່ອອກພໍ່ຂອງທ່ານເຂົ້າໄປຫາແລ້ວໃຫ້ຄົນເປີດກອງຊັບອອກ ກ່າວວ່າ "ລູກສຸທິນ ນີ້ຄືຊັບຝ່າຍມານດາເປັນສົມບັດຝ່າຍຍິງທີ່ໄດ້ຮັບມາທາງຝ່າຍມານດາ ຂອງພໍ່ມີອີກຕ່າງຫາກ ສ່ວນຂອງພໍ່ເຖົ້າອີກຕ່າງຫາກ ລູກສຸທິນຈົ່ງກັບມາເປັນຄະລິຫັດເທີ້ນ ຈະໄດ້ໃຊ້ສອຍຊັບສົມບັດແລະເຮັດບຸນ"

ທ່ານພຣະສຸທິນຕອບວ່າ " ອາດຕະມາບໍ່ອາດບໍ່ສາມາດອາດຕະມາຍັງພໍໃຈປະພຶດພົມມະຈັນຢູ່"

ພໍ່ອອກພໍ່ຂອງພຣະສຸທິນວິ່ງວອນເປັນຄັ້ງທີ ໒ ໆລໆ ເປັນຄັ້ງທີ ໓ ວ່າ "ລູກສຸທິນນີ້ຄືຊັບຝ່າຍມານດາເປັນສົມບັດຝ່າຍຍິງທີ່ໄດ້ຮັບມາທາງຝ່າຍມານດາ ຂອງພໍ່ມີອີກຕ່າງຫາກ ສ່ວນຂອງພໍ່ເຖົ້າອີກຕ່າງຫາກ ລູກສຸທິນຈົ່ງກັບມາເປັນຄະລິຫັດເທີ້ນ ຈະໄດ້ໃຊ້ສອຍຊັບສົມບັດແລະເຮັດບຸນ"

ທ່ານພຣະສຸທິນຕອບວ່າ "ອາດຕະມາຂໍເວົ້າແດ່ ຖ້າພໍ່ອອກພໍ່ຈະບໍ່ຂັດຂ້ອງ"

ບິດາຂອງທ່ານຕອບວ່າ "ນິມົນເວົ້າມາເທີ້ນ ລູກສຸທິນ"

ທ່ານພຣະສຸທິນກ່າວວ່າ "ຖ້າແນວນັ້ນ ພໍ່ອອກພໍ່ຈົ່ງສັ່ງໃຫ້ເຮັດກະສອບປ່ານໜ່ວຍໃຫຍ່ ໆ ບັນຈຸເງິນຄຳໃຫ້ເຕັມ ບັນທຸກໃສ່ກວຽນແລ້ວໂຍນລົງກາງແມ່ນ້ຳຄົງຄາ ຍ້ອນອັນໃດ ຍ້ອນພໍ່ອອກພໍ່ຈະບໍ່ຕ້ອງຢ້ານ ບໍ່ຕ້ອງຫວາດຣະແວງ ບໍ່ຕ້ອງຂົນພອງສະຫຍອງເກົ້າ ບໍ່ຕ້ອງມີການເບິ່ງແຍງຮັກສາເຊິ່ງມີສາເຫດມາຈາກຊັບນັ້ນເລີຍ"

ເມື່ອທ່ານພຣະສຸທິນກ່າວແນວນີ້ ພໍ່ອອກພໍ່ຂອງທ່ານເສຍໃຈດ້ວຍຄິດວ່າ ລູກສຸທິນ ກ່າວແນວນີ້ໄດ້ຈັ່ງໃດ

[໓໕] ຕໍ່ມາ ບິດາຂອງພຣະສຸທິນເອີ້ນອະດີດພັນລະຍາຂອງທ່ານມາສັ່ງວ່າ "ນາງເຈົ້າເປັນທີ່ຮັກແພງພໍໃຈ ບາງເທື່ອລູກສຸທິນຈະເຊື່ອເຈົ້າແດ່"

ທັນໃດນັ້ນ ນາງຈຶ່ງຈັບຕີນທັງ ໒ ຂອງພຣະສຸທິນພ້ອມຖາມວ່າ "ຄູບາອ້າຍ ນາງອັບປະສອນ ພວກໃດນໍ ຜູ້ເປັນຕົ້ນເຫດໃຫ້ຄູບາອ້າຍປະພຶດພົມມະຈັນ"

ທ່ານພຣະສຸທິນຕອບວ່າ "ນ້ອງນາງ ອາດຕະມາບໍ່ໄດ້ປະພຶດພົມມະຈັນຍ້ອນນາງອັບປະສອນເປັນເຫດ" ນາງເສຍໃຈດ້ວຍຄິດວ່າ ມື້ນີ້ ເປັນມື້ທຳອິດທີ່ຄູບາອ້າຍສຸທິນຮຽກເຮົາວ່າ "ນ້ອງນາງ" ຈຶ່ງລົ້ມສະຫຼົບລົງກົງນັ້ນເອງ

ທ່ານພຣະສຸທິນບອກພໍ່ອອກພໍ່ວ່າ "ພໍ່ອອກພໍ່ ຖ້າພໍ່ອອກຈະຖວາຍໂພຊະນະກໍຈົ່ງຖວາຍເທີ້ນຢ່າເຮັດໃຫ້ອາດຕະມາລຳບາກໃຈເລີຍ" ບິດາຂອງທ່ານຈຶ່ງນິມົນໃຫ້ສັນ ຈາກນັ້ນມານດາບິດາຂອງທ່ານປະເຄນຂອງຫຍ້ຳຂອງສັນອັນປະນີດ ຈົນອີ່ມໜຳ ຈາກນັ້ນມານດາບອກພຣະສຸ

ທິນຜູ້ສັນສຳເລັດວ່າ "ລູກສຸທິນຕະກູນເຮົານີ້ມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ມີເງິນມີຄຳຫຼາຍ ມີເຄື່ອງປະດັບຫຼາຍ ມີຊັບແລະເຂົ້າເປືອກຫຼາຍ ທ່ານຄວນກັບມາເປັນຄະລຶຫັດ ຈະໄດ້ໃຊ້ສອຍຊັບສົມບັດແລະເຮັດບຸນ ມາເຫີ້ນລູກສຸທິນກັບມາເປັນຄະລຶຫັດເຫີ້ນ ຈະໄດ້ໃຊ້ສອຍຊັບສົມບັດແລະເຮັດບຸນ"

ທ່ານພຣະສຸທິນຕອບວ່າ "ແມ່ອອກແມ່ ອາດຕະມາບໍ່ອາດ ບໍ່ສາມາດ ອາດຕະມາຍັງພໍໃຈປະພຶດພົມມະຈັນຢູ່"

ມານດາພຣະສຸທິນວິ່ງວອນແມ່ນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ນາງກ່າວວ່າ "ລູກສຸທິນຕະກູນເຮົານີ້ມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ມີເງິນມີຄຳຫຼາຍ ມີເຄື່ອງປະດັບຫຼາຍ ມີຊັບແລະເຂົ້າເປືອກຫຼາຍ ລູກຈົ່ງໃຫ້ຜູ້ສືບເຊື້ອສາຍໄວ້ ເຈົ້າລິດສະຫວິຈະໄດ້ບໍ່ຍຶດມໍລະດົກຂອງເຮົາທີ່ຂາດຜູ້ສືບສະກຸນ"

"ແມ່ອອກ ເລື້ອງນີ້ອາດຕະມາພໍຈະເຮັດໃຫ້ໄດ້"

"ເວລານີ້ ລູກພັກຢູ່ໃສ"

"ອາດຕະມາພັກຢູ່ທີ່ປ່າມະຫາວັນ" ພຣະສຸທິນຕອບແລ້ວລຸກຈາກອາສະນະຫຼີກໄປ

## ພຣະສຸທິນເສບເມຖຸນທຳ

[໓໗] ຫຼັງຈາກນັ້ນ ມານດາຂອງທ່ານພຣະສຸທິນຮຽກອະດີດພັນລະຍາພຣະສຸທິນມາສັ່ງວ່າ "ລູກ ເມື່ອເຖິງເວລາທີ່ເຈົ້າມີລະດູ ຕ່ອມໂລຫິດເກີດມີແກ່ເຈົ້າ ເຈົ້າຕ້ອງບອກແມ່"

ນາງຮັບຄຳ ຕໍ່ມາເມື່ອນາງມີລະດູ ຕ່ອມໂລຫິດເກີດຂຶ້ນຈຶ່ງບອກແມ່ຍ່າວ່າ "ລູກມີລະດູຕ່ອມໂລຫິດເກີດຂຶ້ນແລ້ວ"

ມານດາກ່າວວ່າ "ລູກ ຖ້າແນວນັ້ນ ເຈົ້າຈົ່ງແຕ່ງກາຍດ້ວຍອາພອນທີ່ລູກສຸທິນເຄີຍຮັກແພງພໍໃຈເຫີ້ນ" ນາງກໍປະຕິບັດຕາມຄຳຂອງແມ່ຍ່າ

ຕໍ່ມາ ມານດາພາສະໃພ້ໄປຫາທ່ານພຣະສຸທິນທີ່ປ່າມະຫາວັນ ກ່າວວ່າ "ລູກສຸທິນຕະກູນເຮົາມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ມີເງິນມີຄຳຫຼາຍ ມີເຄື່ອງປະດັບຫຼາຍ ມີຊັບແລະເຂົ້າເປືອກຫຼາຍ ລູກຄວນກັບມາເປັນຄະລຶຫັດ ຈະໄດ້ໃຊ້ສອຍຊັບສົມບັດແລະເຮັດບຸນ"

ພຣະສຸທິນຕອບວ່າ "ອາດຕະມາບໍ່ອາດ ບໍ່ສາມາດ ອາດຕະມາຍັງພໍໃຈປະພຶດພົມມະຈັນຢູ່"

ມານດາພຣະສຸທິນວິ່ງວອນເປັນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ນາງກ່າວວ່າ "ລູກສຸທິນຕະກູນເຮົານີ້ມັ່ງຄັ່ງ ຯລຯ ມີຊັບແລະເຂົ້າເປືອກຫຼາຍ ລູກຈົ່ງໃຫ້ຜູ້ສືບເຊື້ອສາຍໄວ້ ເຈົ້າລິດສະຫວິຈະໄດ້ບໍ່ຍຶດມໍລະດົກຂອງເຮົາທີ່ຂາດຜູ້ສືບສະກຸນ"

ພຣະສຸທິນຕອບວ່າ "ແມ່ອອກ ເລື້ອງນີ້ອາດຕະມາພໍຈະເຮັດໃຫ້ໄດ້" ແລ້ວຈັບແຂນອະດີດພັນລະຍາພາເຂົ້າປ່າມະຫາວັນ ຍ້ອນຍັງບໍ່ໄດ້ບັນຍັດສິກຂາບົດ ຈຶ່ງເຫັນວ່າບໍ່ມີໂທດ ໄດ້ເສບເມຖຸນທຳກັບອະດີດພັນລະຍາ ເຖິງ ໓ ຄັ້ງ ນາງຖືພາຍ້ອນເຫດນີ້

## ທວຍເພບກະຈາຍຂ່າວ

ທວຍເພບຊັ້ນພຸມມະ ກະຈາຍຂ່າວວ່າ ທ່ານຜູ້ຈະເລີນ ພິກຂຸສົງບໍ່ເຄີຍມີສະໜຽດບໍ່ເຄີຍມີໂທດ ພຣະສຸທິນກະລັນທະບຸດ ກໍ່ສະໜຽດ ກໍ່ໂທດຂຶ້ນແລ້ວ

ທວຍເພບຊັ້ນຈາຕຸມມະຫາຣາດສະດັບສຽງຂອງທວຍເພບຊັ້ນພຸມມະແລ້ວ ໄດ້ກະຈາຍຂ່າວຕໍ່ໄປ ຯລຯ ທວຍເພບຊັ້ນຕາວະຕິງສາ ຯລຯ ທວຍເພບຊັ້ນຍາມາ ຯລຯ ທວຍເພບຊັ້ນດຸສິດ ຯລຯ ທວຍເພບຊັ້ນນິມມານະຣະດີ ຯລຯ ທວຍເພບຊັ້ນປະຣະນິມມິຕະວະສະວັດດີ ຯລຯ ທວຍເພບທີ່ນັບເນື່ອງໃນໝູ່ພົມສະດັບສຽງແລ້ວກໍກະຈາຍຂ່າວກັນຕໍ່ໄປວ່າ ທ່ານຜູ້ຈະເລີນພິກຂຸສົງບໍ່ເຄີຍມີສະໜຽດ ບໍ່ເຄີຍມີໂທດ ພຣະສຸທິນກະລັນທະບຸດກໍ່ສະໜຽດ ກໍ່ໂທດຂຶ້ນແລ້ວ

ພຽງບຶດດຽວເທົ່ານັ້ນ ສຽງປ່າວປະກາດໄດ້ກະຈາຍຂຶ້ນໄປເຖິງພົມມະໂລກດ້ວຍປະການແນວນີ້

ຕໍ່ມາ ອະດີດພັນລະຍາຂອງພຣະສຸທິນຖືພາແກ່ຈຶ່ງເກີດບຸດ ພວກເພື່ອນຂອງພຣະສຸທິນຕັ້ງຊື່ເດັກຄົນນັ້ນວ່າ ເດັກຊາຍພີຊະກະ ເອີ້ນອະດີດພັນລະຍາຂອງພຣະສຸທິນວ່າ ພີຊະກະມານດາເອີ້ນພຣະສຸທິນວ່າພີຊະກະບິດາ ຕໍ່ມາທັງມານດາທັງບຸດໄດ້ອອກຈາກເຮືອນໄປບວດເປັນອະນາຄາຣິກໄດ້ສຳເລັດເປັນພຣະອະຣະຫັນ

## ພຣະສຸທິນເກີດຄວາມຮ້ອນໃຈ

[໓໑] ຕໍ່ມາ ພຣະສຸທິນເກີດຄວາມກຸ້ມໃຈເດືອດຮ້ອນໃຈວ່າ "ບໍ່ແມ່ນລາບຂອງເຮົານໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍ ເຮົາບໍ່ໄດ້ດີແລ້ວນໍ ເຖິງຈະເຂົ້າມາບວດໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ກໍຍັງບໍ່ສາມາດປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດ" ຍ້ອນຄວາມກຸ້ມໃຈ ເດືອດຮ້ອນໃຈນັ້ນ ທ່ານຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ມີເລື້ອງໃນໃຈ ທໍ່ທ່ຽວ ເປັນທຸກ ເສຍໃຈ ເດືອດຮ້ອນໃຈ ງ່ວມເຫງົາ

[໓໒] ຝ່າຍພິກຂຸຜູ້ເປັນເພື່ອນຂອງພຣະສຸທິນ ກ່າວກັບທ່ານສຸທິນວ່າ "ທ່ານສຸທິນ ເມື່ອກ່ອນທ່ານມີຜິວພັນຜຸດຜ່ອງ ໜ້າຕາສົດໃສ ມີນ້ຳມີນວນ ແຕ່ບັດນີ້ ເບິ່ງທ່ານຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ມີເລື້ອງໃນໃຈ ທໍ່ທ່ຽວ ເປັນທຸກ ເສຍໃຈ ເດືອດຮ້ອນໃຈງ່ວມເຫງົາ ທ່ານບໍ່ຍິນດີຈະປະພຶດພົມມະຈັນແລ້ວແມ່ນບໍ?"

ພຣະສຸທິນຕອບວ່າ "ທ່ານທັງຫຼາຍ ຄວາມຈິງບໍ່ແມ່ນເຮົາຈະບໍ່ຍິນດີປະພຶດພົມມະຈັນ ເຮົາມີບາບກຳທີ່ເຮັດໄວ້ ຄື ໄດ້ເສບເມຖຸນທຳກັບອະດີດພັນລະຍາ ເຮົາຈຶ່ງເກີດຄວາມກຸ້ມໃຈ ເດືອດຮ້ອນໃຈວ່າ ບໍ່ແມ່ນລາບຂອງເຮົານໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍ ເຮົາບໍ່ໄດ້ດີນໍ ເຖິງຈະເຂົ້າມາບວດໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ກໍຍັງບໍ່ສາມາດຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດ"

ພິກຂຸຜູ້ເປັນເພື່ອນກ່າວວ່າ "ຈິງຢ່າງແນ່ນອນທ່ານສຸທິນ ການທີ່ທ່ານເຂົ້າມາບວດໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ແຕ່ບໍ່ສາມາດຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດ ກໍພໍທີ່ຈະເຮັດໃຫ້ກຸ້ມໃຈ ເດືອດຮ້ອນໃຈໄດ້ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳໄວ້ໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ເພື່ອຄວາມພາກ ບໍ່ແມ່ນເພື່ອຄວາມປະກອບໄວ້ ເພື່ອຄວາມບໍ່ຖືໝັ້ນ ບໍ່ແມ່ນເພື່ອຄວາມຖືໝັ້ນ ບໍ່ແມ່ນບໍ? ເມື່ອພຣະຜູ້ມີພຣະພາກເຈົ້າຊົງສະແດງທຳ ເພື່ອຄາຍຄວາມກຳໜັດ ທ່ານກໍຍັງຈະຄິດເພື່ອຄວາມກຳໜັດ ຊົງສະແດງທຳເພື່ອຄວາມພາກ ທ່ານກໍຍັງຈະຄິດເພື່ອຄວາມປະກອບໄວ້ ຊົງສະແດງທຳເພື່ອຄວາມບໍ່ຖືໝັ້ນ ທ່ານກໍຍັງຈະຄິດເພື່ອມີຄວາມຖືໝັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳໂດຍປະການຕ່າງ ໆ ເພື່ອສຳຣອກຣາຄະ ເພື່ອສວ່າງຄວາມເມົາ ເພື່ອດັບຄວາມກະຫາຍ ເພື່ອຖອນຄວາມອາໄລ ເພື່ອຕັດວັດຕະ ເພື່ອຄວາມສິ້ນຕັນຫາ ເພື່ອຄາຍຄວາມກຳໜັດ ເພື່ອດັບທຸກ ເພື່ອນິພພານ ບໍ່ແມ່ນບໍ? ພຣະຜູ້ມີພຣະພາກເຈົ້າຕັດບອກການລະການ ການກຳນົດຮູ້ຄວາມສຳຄັນໃນການ ການກຳຈັດຄວາມກະຫາຍໃນການ ການເພີກຖອນຄວາມນຶກໃນການ ການລະງັບຄວາມກັດກຸ້ມຍ້ອນການໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ການກະທຳຂອງທ່ານນັ້ນ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດໃຫ້ຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ"

[໓໙] ເມື່ອພິກຂຸຜູ້ເປັນເພື່ອນເຫຼົ່ານັ້ນຕຳໜິພຣະສຸທິນໂດຍປະການຕ່າງ ໆ ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະສຸທິນວ່າ "ສຸທິນ ໄດ້ຂ່າວວ່າ ທ່ານເສບເມຖຸນທຳກັບອະດີດພັນລະຍາແມ່ນບໍ?" ພຣະສຸທິນທູນຮັບວ່າ "ແມ່ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນບໍ່

ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ທ່ານບວດໃນທຳວິໄນທີ່ເຮົາກ່າວດີແລ້ວ ເປັນຫຍັງຈຶ່ງບໍ່ສາມາດປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ເພື່ອຄວາມພາກ ບໍ່ແມ່ນເພື່ອຄວາມປະກອບໄວ້ ເພື່ອຄວາມບໍ່ຖືໝັ້ນ ບໍ່ແມ່ນເພື່ອຄວາມຖືໝັ້ນ ບໍ່ແມ່ນບໍ? ເມື່ອເຮົາສະແດງທຳເພື່ອຄາຍຄວາມກຳໜັດ ທ່ານກໍຍັງຈະຄິດເພື່ອຄວາມກຳໜັດ ເຮົາສະແດງທຳເພື່ອຄວາມພາກ ທ່ານກໍຍັງຈະຄິດເພື່ອຄວາມປະກອບໄວ້ ເຮົາສະແດງທຳເພື່ອຄວາມບໍ່ຖືໝັ້ນ ທ່ານກໍຍັງຈະຄິດເພື່ອມີຄວາມຖືໝັ້ນ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອສຳຮອກຣາຄະ ເພື່ອສວ່າງຄວາມເມົາ ເພື່ອດັບຄວາມກະຫາຍ ເພື່ອຖອນຄວາມອາໄລ ເພື່ອຕັດວັດຕະ ເພື່ອຄວາມສິ້ນຕັນຫາ ເພື່ອຄາຍຄວາມກຳໜັດ ເພື່ອດັບທຸກ ເພື່ອນິພພານ ບໍ່ແມ່ນບໍ? ເຮົາບອກການລະກາມ ການກຳນົດຮູ້ຄວາມສຳຄັນ ໃນກາມ ການກຳຈັດຄວາມກະຫາຍໃນກາມ ການເພີກຖອນຄວາມນຶກໃນກາມ ການລະງັບຄວາມກັດກຸ້ມຍ້ອນກາມໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ?

ໂມຄະບຸຣຸດ ທ່ານສອດອົງຄະຊາດເຂົ້າປາກອະສໍຣະພິດຮ້າຍນັ້ນ ຍັງດີກວ່າສອດອົງຄະຊາດເຂົ້າອົງກຳເນີດສະຕີ ສອດອົງຄະຊາດເຂົ້າປາກງູເຫົ່ານັ້ນຍັງດີກວ່າສອດອົງຄະຊາດເຂົ້າອົງກຳເນີດ ສະຕີ ສອດອົງຄະຊາດເຂົ້າຂຸມຖ່ານໄຟນັ້ນຍັງດີກວ່າສອດອົງຄະຊາດເຂົ້າອົງກຳເນີດສະຕີ ຍ້ອນອັນໃດນໍ? ຍ້ອນຜູ້ສອດອົງຄະຊາດເຂົ້າປາກອະສໍຣະພິດຮ້າຍເປັນຕົ້ນ ເພິ່ງເຖິງຄວາມຕາຍ ຫຼື ທຸກປາງຕາຍຍ້ອນການກະທຳນັ້ນເປັນເຫດ ຫຼັງຈາກຕາຍແລ້ວກໍບໍ່ຕ້ອງໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ສ່ວນຜູ້ສອດອົງຄະຊາດເຂົ້າອົງກຳເນີດສະຕີຫຼັງຈາກຕາຍແລ້ວຕ້ອງໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ໂມຄະບຸຣຸດ ໃນການທີ່ທ່ານເສບອະສັດທຳ ເຊິ່ງເປັນປະເວນີຂອງຊາວບ້ານ ມາຣະຍາດຂອງຄົນຊັ້ນຕ່ຳ ກິຣິຍາຊົ່ວຫຍາບ ມີນ້ຳເປັນທີ່ສຸດ ເປັນກິດທີ່ຈະຕ້ອງເຮັດໃນທີ່ລັບ ຕ້ອງເຮັດກັນສອງຕໍ່ສອງນີ້ມີໂທດຫຼາຍ ທ່ານເປັນຄົນທຳອິດທີ່ກໍ່ອະກຸສົນທຳກ່ອນຄົນອື່ນ ການເຮັດແນວນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດໃຫ້ຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ”

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິພຣະສຸທິນໂດຍປະການຕ່າງ ໆ ແລ້ວ ໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ບຳລຸງຍາກ ມັກຫຼາຍ ບໍ່ສັນໂດດ ຄວາມຄຸກຄີ ຄວາມຂີ້ຄ້ານ ຕັດຄຸນແຫ່ງຄວາມເປັນຄົນລ້ຽງງ່າຍ ບຳລຸງງ່າຍ ມັກໜ້ອຍ ສັນໂດດ ຄວາມຂັດເກົາ ຄວາມກຳຈັດກິເລດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຊົງສະແດງທຳມີກະຖາໃຫ້ເໝາະສົມໃຫ້ເປັນຕາມກັບເລື້ອງນັ້ນ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ

"ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ
໕. ເພື່ອປິດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

**ກໍ ພິກຂຸໃດເສບເມຖຸນທຳ ພິກຂຸນັ້ນ ເປັນປາຣາຊິກ ຫາສັງວາດບໍ່ໄດ້**

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວແນວນີ້

**ສຸທິນພານະວານ ຈົບ**

## ເລື້ອງລິງໂຕແມ່

[໔໐] ສະໄໝນັ້ນ ພິກຂຸອົງໜຶ່ງໃຫ້ອາຫານລ້ຽງລິງໂຕແມ່ໃນປ່າມະຫາວັນ ນະຄອນເວສາລີ ແລ້ວເສບເມຖຸນທຳກັບນາງລິງນັ້ນ ເມື່ອເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນໄປບິນທະບາດໃນນະຄອນເວສາລີ ຕໍ່ມາພິກຂຸຫຼາຍອົງຈາຣິກໄປຕາມເສນາສະນະຍ່າງຜ່ານໄປທາງທີ່ຢູ່ຂອງພິກຂຸນັ້ນ ນາງລິງເຫັນພິກຂຸເຫຼົ່ານັ້ນກຳລັງຍ່າງມາແຕ່ໄກຈຶ່ງກົງເຂົ້າໄປຫາ ແລ້ວເດັ່ງແອວ ເງີງຫາງ ແອ່ນກົ້ນຂຶ້ນ ທຳທ່າທາງຕ່າງ ໆ ຕໍ່ໜ້າພິກຂຸເຫຼົ່ານັ້ນ ພິກຂຸເຫຼົ່ານັ້ນ ຈຶ່ງພາກັນສັນນິດຖານວ່າ ພິກຂຸເຈົ້າຖິ່ນຄົງຈະເສບເມຖຸນທຳກັບນາງລິງໂຕນີ້ແນ່ນອນ ແລ້ວຈອບຢູ່ໃນທີ່ກຳບັງແຫ່ງໜຶ່ງຈົນວ່າພິກຂຸເຈົ້າຖິ່ນທ່ຽວບິນທະບາດໃນນະຄອນເວສາລີ ແລ້ວຖືອາຫານບິນທະບາດກັບມາ

[໔໑] ຂະນະນັ້ນ ນາງລີງໄດ້ເຂົ້າໄປຫາພິກຂຸເຈົ້າຖິ່ນນັ້ນ ເມື່ອພິກຂຸເຈົ້າຖິ່ນສັນບິນທະບາດນັ້ນສ່ວນໜຶ່ງແລ້ວ ໄດ້ແບ່ງອີກສ່ວນໜຶ່ງໃຫ້ແກ່ນາງລີງ ເມື່ອມັນກິນອາຫານແລ້ວໄດ້ແອ່ນກົ້ນຂຶ້ນໃຫ້ ພິກຂຸເຈົ້າຖິ່ນຈຶ່ງເສບເມຖຸນທຳກັບມັນ

ທັນໃດນັ້ນ ພິກຂຸເຫຼົ່ານັ້ນອອກຈາກບ່ອນລີ້ ກ່າວກັບພິກຂຸເຈົ້າຖິ່ນວ່າ "ທ່ານ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວບໍ່ແມ່ນບໍ? ເຫດໃດ ທ່ານຈຶ່ງເສບເມຖຸນທຳກັບນາງລີງນີ້ນໍ"

ທ່ານກ່າວແຍ້ງວ່າ "ຈິງທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າໄດ້ຊົງບັນຍັດສິກຂາບົດໄວ້ແລ້ວ ແຕ່ສິກຂາບົດນັ້ນ ໃຊ້ສະເພາະແມ່ຍິງມະນຸດ ບໍ່ໄດ້ໃຊ້ໃນສັດເດຍຣັດສານໂຕແມ່"

ພິກຂຸເຫຼົ່ານັ້ນກ່າວວ່າ "ພຣະບັນຍັດນັ້ນໃຊ້ໄດ້ຄືກັນທັງໃນແມ່ຍິງມະນຸດ ແລະ ໃນສັດເດຍຣັດສານໂຕແມ່ບໍ່ແມ່ນບໍ? ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ທ່ານບວດໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ເປັນຫຍັງຈຶ່ງບໍ່ສາມາດປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດນໍ ພຣະຜູ້ມີພຣະພາກ ຊົງສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ຯລຯ ຕັດບອກການລະງັບຄວາມກັດກຸ້ມຍ້ອນກາມໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ການເຮັດແນວນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດໃຫ້ຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດອະນຸບັນຍັດ

[໔໘] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານເສບເມຖຸນທຳກັບນາງລີງ ແມ່ນບໍ?" ທ່ານທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ທ່ານບວດໃນທຳວິໄນທີ່ເຮົາກ່າວດີແລ້ວ ເປັນຫຍັງຈຶ່ງບໍ່ສາມາດປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດນໍ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ຯລຯ ເຮົາບອກການລະງັບຄວາມກັດກຸ້ມຍ້ອນກາມໄວ້ໂດຍປະການຕ່າງ ໆ ແລ້ວບໍ່ແມ່ນບໍ?

ໂມຄະບຸຣຸດ ທ່ານສອດອົງຄະຊາດເຂົ້າປາກອະສໍຣະພິດຮ້າຍນັ້ນຍັງດີກວ່າສອດອົງຄະຊາດເຂົ້າອົງກຳເນີດນາງລີງ ສອດອົງຄະຊາດເຂົ້າປາກງູເຫົ່ານັ້ນຍັງດີກວ່າສອດອົງຄະຊາດເຂົ້າອົງກຳເນີດນາງລີງ ສອດອົງຄະຊາດເຂົ້າຂຸມຖ່ານໄຟນັ້ນຍັງດີກວ່າສອດ

ອົງຄະຊາດເຂົ້າອົງກຳເນີດນາງລີງ ຍ້ອນອັນໃດນໍ? ຍ້ອນຜູ້ສອດອົງຄະຊາດເຂົ້າປາກອະສໍຣະພິດຮ້າຍເປັນຕົ້ນ ເພິ່ງເຖິງຄວາມຕາຍ ຫຼືທຸກປາງຕາຍຍ້ອນການກະທຳນັ້ນເປັນເຫດ ຫຼັງຈາກຕາຍແລ້ວກໍບໍ່ຕ້ອງໄປບັງເກີດໃນອະບາຍ ທຸກຄະຕິວິນິບາດ ນະຮົກ ສ່ວນຜູ້ສອດອົງຄະຊາດເຂົ້າອົງກຳເນີດນາງລີງ ຫຼັງຈາກຕາຍແລ້ວຕ້ອງໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ໂມຄະບຸຣຸດ ໃນການທີ່ທ່ານເສບອະສັດທຳເຊິ່ງເປັນປະເວນີຂອງຊາວບ້ານ ມາຣະຍາດຂອງຄົນຊັ້ນຕ່ຳ ກິຣິຍາຊົ່ວຫຍາບ ມີນ້ຳເປັນທີ່ສຸດ ເປັນກິດທີ່ຈະຕ້ອງເຮັດໃນທີ່ລັບ ຕ້ອງເຮັດກັນສອງຕໍ່ສອງນີ້ມີໂທດຫຼາຍ

ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

**ອັນໜຶ່ງ ພິກຂຸໃດເສບເມຖຸນທຳ ໂດຍທີ່ສຸດແມ່ນກັບສັດເດຍຣັດສານໂຕແມ່ ພິກຂຸນັ້ນເປັນປາຣາຊິກຫາສັງວາດບໍ່ໄດ້**

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແນວນີ້

### ເລື້ອງລີງໂຕແມ່ ຈົບ

### ສັນຖະຕະພານະວານ

## ເລື້ອງພວກພິກຂຸວັດຊີບຸດ

[໔໙] ສະໄໝນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີຫຼາຍອົງສັນອາຫານ ນອນ ແລະສົງນ້ຳພໍແກ່ຄວາມຕ້ອງການ ມະນະສິການໂດຍບໍ່ແຍກຄາຍ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມທໍ້ແທ້ພາກັນເສບເມຖຸນທຳ

ຕໍ່ມາ ພວກທ່ານຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະ ແລະ ໂຣກກຸ້ມລຸມ ຈຶ່ງເຂົ້າໄປຫາທ່ານພຣະອານົນຮຽນວ່າ “ທ່ານພຣະອານົນ ພວກຂ້ານ້ອຍບໍ່ຕິຕຽນພຣະພຸດ ບໍ່ຕິຕຽນພຣະທຳ ບໍ່ຕິຕຽນພຣະສົງ ພວກຂ້ານ້ອຍຕິຕຽນຕົນເອງ ບໍ່ຕິຕຽນຜູ້ອື່ນ ພວກຂ້ານ້ອຍບໍ່ມີວາດສະໜາມີບຸນໜ້ອຍ ບວດໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ບໍ່ສາມາດຈະປະພຶດ

ພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ຕະຫຼອດຊີວິດ ບັດນີ້ ຖ້າພວກຂ້ານ້ອຍໄດ້ບັນພະຊາອຸປະສົມບົດ ໃນສຳນັກພຣະຜູ້ມີພຣະພາກເຈົ້າອີກ ພວກຂ້ານ້ອຍເພິ່ງເຫັນແຈ້ງກຸສົນທຳ ໝັ່ນປະກອບຄວາມພຽນໃນການຈະເລີນໂພທິປັກຂິຍະທຳຕັ້ງແຕ່ຫົວຄ່ຳຈົນຮຸ່ງແຈ້ງ ພວກຂ້ານ້ອຍຂໍໂອກາດ ທ່ານພຣະອານົນ ໄດ້ໂຜດຂາບທູນເລື້ອງນີ້ແດ່ພຣະຜູ້ມີພຣະພາກເຈົ້າເທີ້ນ”

ພຣະອານົນຮັບຄຳແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອຮອດແລ້ວໄດ້ຂາບທູນເລື້ອງນີ້ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອານົນ ບໍ່ແມ່ນຖານະ ບໍ່ແມ່ນໂອກາດທີ່ຕະຖາຄົດຈະຖອນປາຣາຊິກສິກຂາບົດທີ່ບັນຍັດແກ່ສາວົກທັງຫຼາຍແລ້ວ ຍ້ອນພວກວັດຊີ ຫຼື ວັດຊີບຸດເປັນເຫດ”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ຜູ້ໃດເປັນພິກຂຸ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມທໍ້ແທ້ ເສບເມຖຸນທຳທັງທີ່ຍັງເປັນພິກຂຸຢູ່ ຜູ້ນັ້ນມາແລ້ວ ສົງບໍ່ຄວນໃຫ້ອຸປະສົມບົດ ແຕ່ຜູ້ໃດເປັນພິກຂຸ ບອກຄືນສິກຂາ ເປີດເຜີຍຄວາມທໍ້ແທ້ ແລ້ວເສບເມຖຸນທຳ ຜູ້ນັ້ນມາແລ້ວ ສົງຄວນໃຫ້ອຸປະສົມບົດ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໔໘] **ອັນໜຶ່ງ ພິກຂຸໃດເຖິງພ້ອມດ້ວຍສິກຂາ ແລະ ສາຊີບຂອງພິກຂຸທັງຫຼາຍ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມທໍ້ແທ້ ເສບເມຖຸນທຳໂດຍທີ່ສຸດແມ່ນກັບສັດເດຍຮັດສານໂຕແມ່ ພິກຂຸນັ້ນເປັນປາຣາຊິກ ຫາສັງວາດບໍ່ໄດ້**

### ເລື້ອງພວກພິກຂຸວັດຊີບຸດ ຈົບ

## ສິກຂາບົດວິພັງ

[໔໕] ຄຳວ່າ ອັນໜຶ່ງ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ມີການງານ ມີຊາດວັນນະ ມີຊື່ ມີຕະກູນ ມີລັກສະນະນິໄສ ມີຄຸນນະທຳ ມີອາລົມຢ່າງໃດ ເປັນເຖຣະ ນະວະກະ ຫຼື ມັດຊິມະ ນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ໆລໆ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ຊື່ວ່າ ພິກຂຸ ຍ້ອນອາໄສການທ່ຽວຂໍ ຊື່ວ່າ ພິກຂຸ ຍ້ອນໃຊ້ຜືນຜ້າທີ່ຖືກເຮັດໃຫ້ເສຍລາຄາ ຊື່ວ່າ ພິກຂຸ ຍ້ອນຮຽກກັນໂດຍໂວຫານ ຊື່ວ່າ ພິກຂຸ ຍ້ອນການປະຕິນຍາຕົນ ຊື່ວ່າ ພິກຂຸ ຍ້ອນພຣະພຸດທະເຈົ້າຊົງບວດໃຫ້ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ອຸປະສົມບົດດ້ວຍໄຕຣສະຣະນະຄົມ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຈະເລີນ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ມີສາຣະ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຍັງຕ້ອງສຶກສາ ຊື່ວ່າ ພິກຂຸ ຍ້ອນເປັນ

ຜູ້ບໍ່ຕ້ອງສຶກສາ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ທີ່ສົງພ້ອມພຽງກັນອຸປະສົມບົດໃຫ້ດ້ວຍຍັດຕິຈະຕຸດຖະກຳທີ່ຖືກຕ້ອງ ສົມຄວນແກ່ເຫດ ໃນພິກຂຸທີ່ກ່າວມານັ້ນ ພິກຂຸຜູ້ທີ່ສົງພ້ອມພຽງກັນອຸປະສົມບົດໃຫ້ດ້ວຍຍັດຕິຈະຕຸດຖະກຳທີ່ຖືກຕ້ອງ ສົມຄວນແກ່ເຫດນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ສິກຂາ ໄດ້ແກ່ ສິກຂາ ໓ ຢ່າງ ຄື ອະທິສີນສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາ ໃນສິກຂາ ໓ ນັ້ນ ອະທິສີນສິກຂານີ້ທີ່ຊົງປະສົງເອົາໃນຄວາມໝາຍນີ້

ທີ່ຊື່ວ່າ ສາຊີບ ໝາຍເຖິງ ສິກຂາບົດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ ພິກຂຸສຶກສາສາຊີບນັ້ນ ເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຜູ້ເຖິງພ້ອມດ້ວຍສາຊີບ

ຄຳວ່າ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມທໍ້ແທ້ ມີພຸດທາທິບາຍວ່າ ພິກຂຸທັງຫຼາຍການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາກໍມີ ການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາກໍມີ

## ບົດພາຊະນີ

## ລັກສະນະທີ່ບໍ່ເປັນອັນບອກຄືນສິກຂາ

ພິກຂຸທັງຫຼາຍ ແນວໃດ ຊື່ວ່າການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

### ໑. ການບອກຄືນສິກຂາດ້ວຍການໃຊ້ຄຳຮ່ຳຮອນ ໑໔ ບົດ

(໑) ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ປາຖະໜາຈະເປັນອຸປາສົກ ປາຖະໜາຈະເປັນຄົນວັດ ປາຖະໜາຈະເປັນສາມະເນນ ປາຖະໜາຈະເປັນເດຍຣະຖີ ປາຖະໜາຈະເປັນສາວົກເດຍຣະຖີ ປາຖະໜາຈະບໍ່ເປັນສະມະນະ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ "ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພຣະພຸດທະເຈົ້າສາບໍ"

ພິກຂຸທັງຫຼາຍ ແມ່ນແນວນີ້ ຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

(໒) ອີກປະການໜຶ່ງ ພິກຂຸໃນທຳວິໄນ ກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຯລຯ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພຣະທຳສາບໍ (໓) ຯລຯ ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພຣະສົງສາບໍ (໔) ຯລຯ ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນສິກຂາສາບໍ (໕) ຯລຯ ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພຣະວິໄນສາບໍ (໖) ຯລຯ ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະ

ເຈົ້າເພິ່ງບອກຄືນພຣະປາຕິໂມກສາບໍ (໗) ຫລຶ ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນອຸດເທດ°ສາບໍ (໘) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພຣະອຸປັດຊາສາບໍ (໙) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພຣະອາຈານສາບໍ (໑໐) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນສັດທິວິຫາຣິກສາບໍ (໑໑) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນອັນເຕວາສິກ ສາບໍ (໑໒) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພິກຂຸຜູ້ຮ່ວມອຸປັດຊາສາບໍ (໑໓) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນພິກຂຸຜູ້ຮ່ວມອາຈານສາບໍ (໑໔) ຫລື ບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງບອກຄືນເພື່ອນພົມມະຈາຣີສາບໍ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າ ເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ໒. ການບອກຄືນສິກຂາດ້ວຍການໃຊ້ຄໍາລໍາພຶງກໍານົດພາວະ ໘ ບົດ

(໑) ພິກຂຸໃນທໍາວິໄນນີ້ ກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລື ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດບອກໃຫ້ຜູ້ອື່ນຮູ້ວ່າ ແນວໃດສາ ຂ້າພະເຈົ້າເພິ່ງເປັນຄະລຶຫັດສາບໍ (໒) ຫລື ເພິ່ງເປັນອຸປາສົກສາບໍ (໓) ຫລື ເພິ່ງເປັນຄົນວັດສາບໍ (໔) ຫລື ເພິ່ງເປັນສາມະເນນສາບໍ (໕) ຫລື ເພິ່ງເປັນເດຍຣະຖີສາບໍ (໖) ຫລື ເພິ່ງເປັນສາວົກເດຍຣະຖີສາບໍ (໗) ຫລື ເພິ່ງເປັນຜູ້ບໍ່ແມ່ນສະມະນະສາບໍ (໘) ຫລື ເພິ່ງເປັນຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດສາບໍ

ພິກຂຸທັງຫຼາຍ ແມ່ນແນວນີ້ກໍຊື່ວ່າ ເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ໓.-໑໐. ການບອກຄືນສິກຂາດ້ວຍການໃຊ້ຄໍາປະຣິກັບ ໑໔ ບົດແລະ ໘ ບົດ

[໔໖] (໑) ອີກປະການໜຶ່ງ ພິກຂຸໃນທໍາວິໄນນີ້ ກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລື ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ກໍຖ້າວ່າ ຂ້າພະເຈົ້າເພິ່ງບອກຄືນພຣະພຸດທະເຈົ້າ ຫລື (໘) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ກໍຖ້າວ່າ ຂ້າພະເຈົ້າເພິ່ງເປັນຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດ ຫລື (໑) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ກໍຖ້າວ່າ ຂ້າພະເຈົ້າເພິ່ງບອກຄືນພຣະພຸດທະເຈົ້າ ຫລື (໘) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ກໍຖ້າວ່າ ຂ້າພະເຈົ້າເພິ່ງເປັນຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດ ຫລື (໑) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຖ້າຈັ່ງຊັ້ນແລ້ວ ຂ້າພະເຈົ້າເພິ່ງບອກຄືນພຣະພຸດທະເຈົ້າ ຫລື (໘) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຖ້າຈັ່ງຊັ້ນແລ້ວ ຂ້າພະເຈົ້າເພິ່ງເປັນຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດ ຫລື (໑) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີຄວາມດໍາຣິວ່າ

ຂ້າພະເຈົ້າເພິ່ງບອກຄືນພຣະພຸດທະເຈົ້າ ຫລື (໗) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີຄວາມດຳຣິວ່າ ຂ້າພະເຈົ້າເພິ່ງເປັນຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ໑໑. ການບອກຄືນສິກຂາດ້ວຍການໃຊ້ຄຳອ້າງວັດຖຸທີ່ລະນຶກ ໑໗ ບົດ

[໔໗] (໑) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລື ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງມານດາ (໒) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງບິດາ (໓) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງອ້າຍນ້ອງຊາຍ (໔) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງເອື້ອຍນ້ອງສາວ (໕) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງບຸດ (໖) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງທິດາ (໗) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງພັນລະຍາ (໘) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງໝູ່ຍາດຕິພີ່ນ້ອງ (໙) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງໝູ່ມິດສະຫາຍ (໑໐) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງບ້ານເຮືອນ (໑໑) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງນິຄົມ (໑໒) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງນາ (໑໓) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງສວນ (໑໔) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງເງິນ (໑໕) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງຄຳ (໑໖) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງສິລະປະ (໑໗) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າລະນຶກເຖິງການຫົວຂວນ ການເຈຣະຈາ ການຫຼິ້ນໃນຄັ້ງກ່ອນ ໆ

ພິກຂຸທັງຫຼາຍ ແມ່ນແນວນີ້ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ໑໒. ການບອກຄືນສິກຂາດ້ວຍການໃຊ້ຄຳສະແດງຄວາມຫ່ວງໃຍ ໙ ບົດ

[໔໘] (໑) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລື ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີມານດາທີ່ຕ້ອງລ້ຽງດູ (໒) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີບິດາທີ່ຕ້ອງລ້ຽງດູ (໓) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີອ້າຍນ້ອງຊາຍທີ່ຕ້ອງລ້ຽງດູ (໔) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີເອື້ອຍນ້ອງສາວທີ່ຕ້ອງລ້ຽງດູ (໕) ຫລື ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີບຸດທີ່ຕ້ອງລ້ຽງດູ (໖) ຫລື ພິກຂຸບອກໃຫ້

ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີທິດາທີ່ຕ້ອງລ້ຽງດູ (໗) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີພັນລະຍາທີ່ຕ້ອງລ້ຽງດູ (໘) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີໝູ່ຍາດຕິພີ່ນ້ອງທີ່ຕ້ອງລ້ຽງດູ (໙) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີໝູ່ມິດທີ່ຕ້ອງລ້ຽງດູ

ພິກຂຸທັງຫຼາຍ ແມ່ນແນວນີ້ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ໑໓. ການບອກຄືນສິກຂາດ້ວຍການໃຊ້ຄຳອ້າງທີ່ຢູ່ອາໄສ ໑໖ ບົດ

[໔໙] (໑) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລຶ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີມານດາ ທ່ານຈັກລ້ຽງດູຂ້າພະເຈົ້າ (໒) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີບິດາ ທ່ານຈັກລ້ຽງດູຂ້າພະເຈົ້າ (໓) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີອ້າຍນ້ອງຊາຍ ເຂົາຈັກລ້ຽງດູຂ້າພະເຈົ້າ (໔) ຫລຶ ພິກຂຸບອກໃຫ້ ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີເອື້ອຍນ້ອງສາວ ເຂົາຈັກລ້ຽງດູຂ້າພະເຈົ້າ (໕) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີບຸດ ເຂົາຈັກລ້ຽງດູຂ້າພະເຈົ້າ (໖) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີທິດາ ເຂົາຈັກລ້ຽງດູຂ້າພະເຈົ້າ (໗) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີພັນລະຍາ ເຂົາຈັກລ້ຽງດູຂ້າພະເຈົ້າ (໘) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີໝູ່ຍາດ ພວກເຂົາຈັກລ້ຽງດູຂ້າພະເຈົ້າ (໙) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີໝູ່ມິດ ພວກເຂົາຈັກລ້ຽງດູຂ້າພະເຈົ້າ (໑໐) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີບ້ານ ຂ້າພະເຈົ້າຈັກລ້ຽງຊີບດ້ວຍບ້ານນັ້ນ (໑໑) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີນິຄົມ ຂ້າພະເຈົ້າຈັກລ້ຽງຊີບດ້ວຍນິຄົມນັ້ນ (໑໒) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີນາ ຂ້າພະເຈົ້າຈັກລ້ຽງຊີບດ້ວຍນານັ້ນ (໑໓) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີສວນ ຂ້າພະເຈົ້າຈັກລ້ຽງຊີບດ້ວຍສວນນັ້ນ (໑໔) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີເງິນ ຂ້າພະເຈົ້າຈັກລ້ຽງຊີບດ້ວຍເງິນນັ້ນ (໑໕) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີຄຳ ຂ້າພະເຈົ້າຈັກລ້ຽງຊີບດ້ວຍທອງນັ້ນ (໑໖) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າມີສິລະປະ ຂ້າພະເຈົ້າຈັກລ້ຽງຊີບດ້ວຍສິລະປະນັ້ນ

ພິກຂຸທັງຫຼາຍ ແມ່ນແນວນີ້ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ໑໔. ການບອກຄືນສິກຂາດ້ວຍການອ້າງວ່າພົມມະຈັນເຮັດໄດ້ຍາກ ໘ ບົດ

[໕໐] (໑) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລຶ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ພົມມະຈັນເຮັດໄດ້ຍາກ (໒) ຫລຶ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ພົມມະ

ຈັນເຮັດບໍ່ໄດ້ງ່າຍ (໓) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ພົມມະຈັນປະພຶດໄດ້ຍາກ (໔) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ພົມມະຈັນປະພຶດບໍ່ໄດ້ງ່າຍ (໕) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ເຮົາບໍ່ອາດ (໖) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ເຮົາບໍ່ສາມາດ (໗) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ເຮົາບໍ່ຍິນດີ (໘) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ເຮົາບໍ່ລື່ນເລີງ

ພິກຂຸທັງຫຼາຍ ແມ່ນແນວນີ້ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແຕ່ບໍ່ເປັນການບອກຄືນສິກຂາ

## ລັກສະນະທີ່ຈັດວ່າເປັນການບອກຄືນສິກຂາ

[໕໑] ພິກຂຸທັງຫຼາຍ ແນວໃດ ຊື່ວ່າການເປີດເຜີຍຄວາມທໍ້ແທ້ ແລະ ເປັນການບອກຄືນສິກຂາ

## ໑. ການບອກຄືນສິກຂາດ້ວຍຄຳທີ່ເປັນປັດຈຸບັນ ໑໔ ບົດ

(໑) ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລຼ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະພຸດທະເຈົ້າ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

(໒) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລຶຫັດ ຫລຼ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະທຳ (໓) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະສົງ (໔) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນສິກຂາ (໕) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະວິໄນ (໖) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະປາຕິໂມກ (໗) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນອຸດເທດ (໘) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະອຸປັດຊາ (໙) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພຣະອາຈານ (໑໐) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນສັດທິວິຫາຣິກ (໑໑) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນອັນເຕວາສິກ (໑໒) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພິກຂຸຜູ້ຮ່ວມອຸປັດຊາ (໑໓) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນພິກຂຸຜູ້ຮ່ວມອາຈານ (໑໔) ຫລຼ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບອກຄືນເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ໒. ການບອກຄືນສິກຂາໂດຍການສະແດງພາວະ ໗ ບົດ

(໑) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍ ລັງກຽດເພດພິກຂຸ ປາຖະໜາຈະເປັນຄະລິຫັດ ຯລຯ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າ ເປັນຄະລິຫັດ (໒) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນອຸປາສົກ (໓) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນຄົນວັດ (໔) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນສາມະເນນ (໕) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນເດຍຣະຖີ (໖) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນສາວົກເດຍຣະຖີ (໗) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນຜູ້ບໍ່ແມ່ນສະມະນະ (໘) ຯລຯ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ທ່ານຈົ່ງຈຳຂ້າພະເຈົ້າວ່າເປັນຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ໓. ການບອກຄືນສິກຂາໂດຍໃຊ້ຄຳເປັນປັດຈຸບັນວ່າບໍ່ກ່ຽວຂ້ອງ ໑໔ ບົດ

[໕໒] (໑) ອີກປະການໜຶ່ງ ພິກຂຸກະສັນ ບໍ່ຍິນດີ ປາຖະໜາຈະສິກ ອຶດອັດ ເບື່ອໜ່າຍລັງກຽດເພດພິກຂຸ ປາຖະໜາຈະເປັນຄະລິຫັດ ຯລຯ ປາຖະໜາຈະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າເຊົາກ່ຽວຂ້ອງກັບພຣະພຸດທະເຈົ້າ ຯລຯ (໑໔) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າເຊົາກ່ຽວຂ້ອງກັບເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ໔. ການບອກຄືນສິກຂາໂດຍໃຊ້ຄຳວ່າຈະມີອັນໃດ ໑໔ ບົດ

(໑) ອີກປະການໜຶ່ງ ພິກຂຸໃນທຳວິໄນນີ້ບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າຈະມີອັນໃດກັບພຣະພຸດທະເຈົ້າ ຯລຯ (໑໔) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າຈະມີອັນໃດກັບເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ໕. ການບອກຄືນສິກຂາໂດຍໃຊ້ຄຳວ່າບໍ່ຕ້ອງການ ໑໔ ບົດ

(໑) ອີກປະການໜຶ່ງ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບໍ່ຕ້ອງການພຣະພຸດທະເຈົ້າ ຯລຯ (໑໔) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າບໍ່ຕ້ອງການເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ໖. ການບອກຄືນສິກຂາໂດຍໃຊ້ຄຳວ່າພົ້ນຂາດແລ້ວ ໑໔ ບົດ

(໑) ອີກປະການໜຶ່ງ ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າພົ້ນຂາດແລ້ວຈາກພຣະພຸດທະເຈົ້າ ຯລຯ (໑໔) ພິກຂຸບອກໃຫ້ຜູ້ອື່ນຮູ້ວ່າ ຂ້າພະເຈົ້າພົ້ນຂາດແລ້ວຈາກເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ບອກຄືນສິກຂາໂດຍການໃຊ້ຄຳໄວພົດ

[໕໓] ອີກປະການໜຶ່ງ ຄຳທີ່ເປັນໄວພົດ[១] ຂອງພຣະພຸດ ຄຳທີ່ເປັນໄວພົດຂອງພຣະທຳ ຄຳທີ່ເປັນໄວພົດຂອງພຣະສົງ ຄຳທີ່ເປັນໄວພົດຂອງສິກຂາ ຄຳທີ່ເປັນໄວພົດ ຂອງພຣະວິໄນ ຄຳທີ່ເປັນໄວພົດຂອງພຣະປາຕິໂມກ ຄຳທີ່ເປັນໄວພົດຂອງອຸດເທດ ຄຳທີ່ເປັນໄວພົດຂອງພຣະອຸປັດຊາ ຄຳທີ່ເປັນໄວພົດຂອງພຣະອາຈານ ຄຳທີ່ເປັນໄວພົດຂອງສັດທິວິຫາຣິກ ຄຳທີ່ເປັນໄວພົດຂອງອັນເຕວາສິກ ຄຳທີ່ເປັນໄວພົດຂອງພິກຂຸຜູ້ຮ່ວມພຣະອຸປັດຊາ ຄຳທີ່ເປັນໄວພົດຂອງພິກຂຸຜູ້ຮ່ວມພຣະອາຈານ ຄຳທີ່ເປັນໄວພົດຂອງເພື່ອນພົມມະຈາຣີ ຄຳທີ່ເປັນໄວພົດຂອງຄະລືຫັດ ຄຳທີ່ເປັນໄວພົດຂອງອຸປາສົກ ຄຳທີ່ເປັນໄວພົດຂອງຄົນວັດ ຄຳທີ່ເປັນໄວພົດຂອງສາມະເນນ ຄຳທີ່ເປັນໄວພົດຂອງເດຍຣະຖີ ຄຳທີ່ເປັນໄວພົດຂອງສາວົກຂອງເດຍຣະຖີ ຄຳທີ່ເປັນໄວພົດຂອງຜູ້ບໍ່ແມ່ນສະມະນະ ຄຳທີ່ເປັນໄວພົດຂອງຜູ້ບໍ່ແມ່ນເຊື້ອສາຍພຣະສາກະຍະບຸດ ແມ່ນອື່ນໃດທີ່ມີຢູ່ ພິກຂຸບອກໃຫ້ຜູ້ອື່ນຮູ້ດ້ວຍຄຳທີ່ເປັນໄວພົດເຫຼົ່ານັ້ນ ອັນເປັນອາການ ເປັນລັກສະນະ ເປັນສັນຍະລັກ

ພິກຂຸທັງຫຼາຍ ແມ່ນແນວນີ້ ກໍຊື່ວ່າເປັນການເປີດເຜີຍຄວາມທໍ້ແທ້ ແລະເປັນການບອກຄືນສິກຂາ

## ລັກສະນະທີ່ບອກຄືນສິກຂາແລ້ວບໍ່ເປັນອັນບອກຄືນ

[໕໔] ພິກຂຸທັງຫຼາຍ ແນວໃດ ຊື່ວ່າບໍ່ເປັນການບອກຄືນສິກຂາ ຄື ພິກຂຸຜູ້ວິກົນຈະລິດບອກຄືນສິກຂາດ້ວຍຄຳທີ່ເປັນອາການ ເປັນລັກສະນະ ເປັນສັນຍະລັກ ຕາມທີ່ພິກຂຸໃນທຳວິໄນນີ້ບອກຄືນສິກຂາກັນ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸປົກກະຕິບອກຄືນສິກຂາຕໍ່ໜ້າພິກຂຸຜູ້ວິກົນຈະລິດ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸມີຈິດຟຸ້ງຊ່ານບອກຄືນສິກຂາ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າພິກຂຸມີຈິດຟຸ້ງຊ່ານ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸກະສັບກະສ່າຍຍ້ອນເວທະນາບອກຄືນສິກຂາ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າພິກຂຸຜູ້ກະສັບກະສ່າຍຍ້ອນເວທະນາ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າເທວະດາ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າສັດເດຍຣັດສານ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າຊາວມິລັກຂະ ດ້ວຍພາສາຊາວອະຣິຍະກະ ຖ້າເຂົາບໍ່ເຂົ້າໃຈ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າຊາວອະຣິຍະກະ ດ້ວຍພາສາຊາວມິລັກຂະ ຖ້າເຂົາບໍ່ເຂົ້າໃຈ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າຊາວອະຣິຍະກະ ດ້ວຍພາສາຊາວອະຣິຍະກະ ຖ້າເຂົາບໍ່ເຂົ້າໃຈ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາຕໍ່ໜ້າຊາວມິລັກຂະ ດ້ວຍພາສາຊາວມິລັກຂະ ຖ້າເຂົາບໍ່ເຂົ້າໃຈ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາ ໂດຍເວົ້າຫຼິ້ນ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບອກຄືນສິກຂາ ໂດຍເວົ້າພັ້ງພາດ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບໍ່ປະສົງຈະປະກາດ ແຕ່ປະກາດໃຫ້ໄດ້ຍິນ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸປະສົງຈະປະກາດ ແຕ່ບໍ່ປະກາດໃຫ້ໄດ້ຍິນ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸປະກາດແກ່ຜູ້ບໍ່ເຂົ້າໃຈຄວາມໝາຍ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບໍ່ປະກາດແກ່ຜູ້ເຂົ້າໃຈຄວາມໝາຍ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸບໍ່ປະກາດໂດຍປະການທັງປວງ ຍ່ອມບໍ່ເປັນອັນບອກຄືນສິກຂາ

ພິກຂຸທັງຫຼາຍ ແນວນີ້ ຊື່ວ່າບໍ່ເປັນອັນບອກຄືນສິກຂາ

## ສິກຂາບົດວິພັງ

[໔໘] ທີ່ຊື່ວ່າ ເມຖຸນທຳ ໄດ້ແກ່ ອະສັດທຳ ເຊິ່ງເປັນປະເວນີຂອງຊາວບ້ານ ມາຣະຍາດຂອງຄົນຊັ້ນຕ່ຳ ກິຣິຍາຊົ່ວຫຍາບ ມີນ້ຳເປັນທີ່ສຸດ ເປັນກິດທີ່ຈະຕ້ອງເຮັດໃນທີ່ລັບ ຕ້ອງເຮັດກັນສອງຕໍ່ສອງ ນີ້ຊື່ວ່າ ເມຖຸນທຳ

ທີ່ຊື່ວ່າ ເສບ ໄດ້ແກ່ ພິກຂຸໃດ ສອດເຄື່ອງໝາຍເພດເຂົ້າໄປທາງເຄື່ອງໝາຍເພດ ສອດອົງຄະຊາດເຂົ້າໄປທາງອົງກຳເນີດ ໂດຍທີ່ສຸດເຂົ້າໄປເລິກແມ່ນພຽງເມັດງາ ພິກຂຸນີ້ຊື່ວ່າ ເສບ

ຄຳວ່າ ໂດຍທີ່ສຸດແມ່ນກັບສັດເດຍຣັດສານໂຕແມ່ ຄວາມວ່າ ພິກຂຸເສບເມຖຸນທຳແມ່ນກັບສັດເດຍຣັດສານໂຕແມ່ ກໍບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ບໍ່ຕ້ອງເວົ້າຮອດເຖິງການເສບກັບແມ່ຍິງມະນຸດ ດັ່ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ໂດຍທີ່ສຸດແມ່ນກັບສັດເດຍຣັດສານໂຕແມ່

ຄຳວ່າ ເປັນປາຣາຊິກ ຄວາມວ່າ ພິກຂຸເສບເມຖຸນທຳ ຍ່ອມບໍ່ເປັນສະມະນະບໍ່ເປັນເຊື້ອສາຍພຣະສາກະຍະບຸດ ປຽບເໝືອນຄົນຖືກຕັດຫົວ ບໍ່ອາດມີຊີວິດຢູ່ໄດ້ ໂດຍການຕໍ່ຫົວເຂົ້າກັບຮ່າງກາຍນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າ ສັງວາດ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າ ສັງວາດ ສັງວາດນັ້ນບໍ່ມີກັບພິກຂຸອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ບົດພາຊະນີ

## ມັກພານະວານ

[໔໖] ແມ່ຍິງ ໓ ຈຳພວກ ຄື ແມ່ຍິງມະນຸດ ແມ່ຍິງອະມະນຸດ ສັດເດຍຣັດສານໂຕແມ່

ອຸພະໂຕພະຍັນຊະນະກະ ໓ ຈຳພວກ ຄື ອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ແລະອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ

ບັນເດາະ ໓ ຈຳພວກ ຄື ບັນເດາະທີ່ເປັນມະນຸດ ບັນເດາະທີ່ເປັນອະມະນຸດ ບັນເດາະທີ່ເປັນສັດເດຍຣັດສານ

ຊາຍ ໓ ຈຳພວກ ຄື ຊາຍທີ່ເປັນມະນຸດ ຊາຍທີ່ເປັນອະມະນຸດ ສັດເດຍຣັດສານໂຕຜູ້

## ແມ່ຍິງ ໓ ຈຳພວກ ມີພວກລະ ໓ ທະວານ

ພິກຂຸເສບເມຖຸນທຳກັບແມ່ຍິງມະນຸດ ໓ ທາງ ຄື ທະວານໜັກ ທະວານເບົາ ປາກ ຕ້ອງອາບັດປາຣາຊິກ

ພິກຂຸເສບເມຖຸນທຳກັບແມ່ຍິງອະມະນຸດ ຯລຯ ກັບສັດເດຍຣັດສານໂຕແມ່ ໓ ທາງ ຄື ທະວານໜັກ ທະວານເບົາ ປາກ ຕ້ອງອາບັດປາຣາຊິກ

## ອຸພະໂຕພະຍັນຊະນະກະ ໓ ຈຳພວກ ມີພວກລະ ໓ ທະວານ

ພິກຂຸເສບເມຖຸນທຳກັບອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ຯລຯ ກັບອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ຯລຯ ກັບອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ ໓ ທາງ ຄື ທະວານໜັກ ທະວານເບົາ ປາກ ຕ້ອງອາບັດປາຣາຊິກ

## ບັນເດາະ ໓ ຈຳພວກ ມີພວກລະ ໔ ທະວານ

ພິກຂຸເສບເມຖຸນທຳກັບບັນເດາະທີ່ເປັນມະນຸດ ໆລໆ ກັບບັນເດາະທີ່ເປັນອະມະນຸດ ໆລໆ ກັບບັນເດາະທີ່ເປັນສັດເດຍຣັດສານ ໔ ທາງ ຄືທະວານໜັກ ປາກ ຕ້ອງອາບັດປາຣາຊິກ

## ຊາຍ ໓ ຈຳພວກ ມີພວກລະ ໔ ທະວານ

ພິກຂຸເສບເມຖຸນທຳກັບຊາຍທີ່ເປັນມະນຸດ ໆລໆ ກັບຊາຍທີ່ເປັນອະມະນຸດ ໆລໆ ກັບສັດເດຍຣັດສານໂຕຜູ້ ໔ ທາງ ຄື ທະວານໜັກ ປາກ ຕ້ອງອາບັດປາຣາຊິກ

## ຕ້ອງອາບັດປາຣາຊິກທັງ ໓ ທະວານ

[໕໗] ເມື່ອພິກຂຸເກີດຄວາມຄິດຈະເສບເມຖຸນທຳ ສອດອົງຄະຊາດເຂົ້າທາງທະວານໜັກຂອງແມ່ຍິງມະນຸດ ຕ້ອງອາບັດປາຣາຊິກ ເມື່ອພິກຂຸເກີດຄວາມຄິດຈະເສບເມຖຸນທຳ ສອດອົງຄະຊາດເຂົ້າທາງທະວານເບົາ ຕ້ອງອາບັດປາຣາຊິກ ເມື່ອພິກຂຸເກີດຄວາມຄິດຈະເສບເມຖຸນທຳ ສອດອົງຄະຊາດເຂົ້າທາງປາກຂອງແມ່ຍິງມະນຸດ ຕ້ອງອາບັດປາຣາຊິກ

ເມື່ອພິກຂຸເກີດຄວາມຄິດຈະເສບເມຖຸນທຳ ສອດອົງຄະຊາດເຂົ້າທາງທະວານໜັກ ໆລໆ ທະວານເບົາ ໆລໆ ທາງປາກຂອງແມ່ຍິງອະມະນຸດ ໆລໆ ຂອງສັດເດຍຣັດສານໂຕແມ່ ໆລໆ ຂອງອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ໆລໆ ຂອງອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ໆລໆ ຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ ຕ້ອງອາບັດປາຣາຊິກ

ເມື່ອພິກຂຸເກີດຄວາມຄິດຈະເສບເມຖຸນທຳ ສອດອົງຄະຊາດເຂົ້າທາງທະວານໜັກ ໆລໆ ທາງປາກຂອງບັນເດາະທີ່ເປັນມະນຸດ ໆລໆ ຂອງບັນເດາະທີ່ເປັນອະມະນຸດ ໆລໆ ຂອງບັນເດາະທີ່ເປັນສັດເດຍຣັດສານ ໆລໆ ຂອງມະນຸດຜູ້ຊາຍ ໆລໆ ຂອງອະມະນຸດຜູ້ຊາຍ ໆລໆ ຂອງສັດເດຍຣັດສານໂຕຜູ້ ຕ້ອງອາບັດປາຣາຊິກ

## ວ່າດ້ວຍເລື້ອງບໍ່ມີເຄື່ອງຫຸ້ມ

[໕໘] ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວ ໃຊ້ທະວານໜັກ ນັ່ງເຕັງອົງຄະຊາດ ຖ້າພິກຂຸຍິນດີຂະນະທີ່ກຳລັງສອດເຂົ້າໄປ ຍິນດີຂະນະທີ່ສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວ ໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຖ້າພິກຂຸບໍ່ຍິນດີຂະນະກຳລັງສອດເຂົ້າໄປ ແຕ່ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວ ໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຖ້າພິກຂຸບໍ່ຍິນດີຂະນະກຳລັງສອດເຂົ້າໄປ ບໍ່ຍິນດີຂະນະສອດເຂົ້າໄປແລ້ວ ແຕ່ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວ ໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຖ້າພິກຂຸບໍ່ຍິນດີຂະນະກຳລັງສອດເຂົ້າໄປ ບໍ່ຍິນດີຂະນະສອດເຂົ້າໄປແລ້ວ ບໍ່ຍິນດີຂະນະຢຸດຢູ່ ແຕ່ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວ ໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຖ້າພິກຂຸບໍ່ຍິນດີຂະນະກຳລັງສອດເຂົ້າໄປ ບໍ່ຍິນດີຂະນະສອດເຂົ້າໄປແລ້ວ ບໍ່ຍິນດີຂະນະຢຸດຢູ່ ບໍ່ຍິນດີຂະນະຖອດອອກ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

[໕໙] ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດຕື່ນ ຯລຯ ແມ່ຍິງມະນຸດຫຼັບ ຯລຯ ແມ່ຍິງມະນຸດເມົາ ຯລຯ ແມ່ຍິງມະນຸດວິກົນຈະລິດ ຯລຯ ແມ່ຍິງມະນຸດເຜີສະຕິ ຯລຯ ແມ່ຍິງມະນຸດທີ່ຕາຍແລ້ວແຕ່ບໍ່ຖືກສັດກັດກິນ ຯລຯ ແມ່ຍິງມະນຸດທີ່ຕາຍແລ້ວແຕ່ບໍ່ຖືກສັດກັດກິນໂດຍສ່ວນຫຼາຍມາ ແລ້ວໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີ ຕ້ອງອາບັດປາຣາຊິກ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດທີ່ຕາຍແລ້ວເຊິ່ງຖືກສັດກັດກິນໂດຍສ່ວນຫຼາຍມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງອະມະນຸດ ຯລຯ ສັດເດຍຣັດສານໂຕແມ່ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ ມາຫາພິກຂຸ ແລ້ວໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕື່ນ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຫຼັບ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານເມົາ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານວິກົນຈະລິດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານເຜີສະຕິ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕາຍແລ້ວ ແຕ່ບໍ່ຖືກສັດກັດກິນໂດຍສ່ວນຫຼາຍມາ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕາຍແລ້ວ ຖືກສັດກັດກິນໂດຍສ່ວນຫຼາຍມາຫາພິກຂຸແລ້ວ ໃຊ້ທະວານໜັກນັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາບັນເດາະທີ່ເປັນມະນຸດ ຯລຯ ບັນເດາະທີ່ເປັນອະມະນຸດ ຯລຯ ບັນເດາະທີ່ເປັນສັດເດຍຣັດສານມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາບັນເດາະທີ່ເປັນສັດເດຍຣັດສານຕື່ນ ຯລຯ ບັນເດາະທີ່ເປັນສັດເດຍຣັດສານຫຼັບ ຯລຯ ບັນເດາະທີ່ເປັນສັດເດຍຣັດສານເມົາ ຯລຯ ບັນເດາະທີ່ເປັນສັດເດຍຣັດສານວິກົນຈະລິດ ຯລຯ ບັນເດາະທີ່ເປັນສັດເດຍຣັດສານເຜີສະຕິ ຯລຯ ບັນເດາະທີ່ເປັນສັດເດຍຣັດສານທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ບັນເດາະທີ່ເປັນສັດເດຍຣັດສານທີ່ຕາຍແລ້ວ ແຕ່ບໍ່ຖືກສັດກັດກິນໂດຍສ່ວນຫຼາຍມາ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ພາບັນເດາະທີ່ເປັນສັດເດຍຣັດສານທີ່ຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

[໖໐] ພວກພິກຂຸຜູ້ເປັນສັດຕູກັນ ພາມະນຸດຜູ້ຊາຍ ຯລຯ ອະມະນຸດຜູ້ຊາຍ ຯລຯ ສັດເດຍຣັດສານໂຕຜູ້ມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາສັດເດຍຣັດສານໂຕຜູ້ຕື່ນ ຯລຯ ສັດເດຍຣັດສານໂຕຜູ້ຫຼັບ ຯລຯ ສັດເດຍຣັດສານໂຕຜູ້ເມົາ ຯລຯ ສັດເດຍຣັດສານໂຕຜູ້ວິກົນຈະລິດ ຯລຯ ສັດເດຍຣັດສານໂຕຜູ້ເຜີສະຕິ ຯລຯ ສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວ ແຕ່ບໍ່ຖືກສັດກັດກິນໂດຍສ່ວນຫຼາຍມາ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ພາສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍມາຫາພິກຂຸແລ້ວໃຊ້ທະວານໜັກ ນັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

## ວ່າດ້ວຍເລື້ອງມີເຄື່ອງຫຸ້ມ

[๕๑] ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດຂອງແມ່ຍິງມີເຄື່ອງຫຸ້ມ ຂອງພິກຂຸບໍ່ມີ ຯລຯ ຂອງແມ່ຍິງບໍ່ມີເຄື່ອງຫຸ້ມ ຂອງພິກຂຸມີ ຯລຯ ຂອງແມ່ຍິງມີເຄື່ອງຫຸ້ມ ຂອງພິກຂຸກໍມີ ຯລຯ ຂອງແມ່ຍິງບໍ່ມີເຄື່ອງຫຸ້ມ ຂອງພິກຂຸກໍບໍ່ມີ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາແມ່ຍິງມະນຸດຕື່ນ ຯລຯ ແມ່ຍິງມະນຸດຫຼັບ ຯລຯ ແມ່ຍິງມະນຸດເມົາ ຯລຯ ແມ່ຍິງມະນຸດວິກົນຈະລິດ ຯລຯ ແມ່ຍິງມະນຸດເຜີສະຕິ ຯລຯ ແມ່ຍິງມະນຸດທີ່ຕາຍແລ້ວແຕ່ບໍ່ຖືກສັດກັດກິນ ຯລຯ ແມ່ຍິງມະນຸດທີ່ຕາຍແລ້ວ ແຕ່ບໍ່ຖືກສັດກັດກິນໂດຍສ່ວນຫຼາຍມາ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ພາແມ່ຍິງມະນຸດທີ່ຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຂອງແມ່ຍິງມີເຄື່ອງຫຸ້ມ ຂອງພິກຂຸບໍ່ມີ ຯລຯ ຂອງແມ່ຍິງບໍ່ມີເຄື່ອງຫຸ້ມ ຂອງພິກຂຸມີ ຯລຯ ຂອງແມ່ຍິງມີເຄື່ອງຫຸ້ມ ຂອງພິກຂຸກໍມີ ຯລຯ ຂອງແມ່ຍິງບໍ່ມີເຄື່ອງຫຸ້ມ ຂອງພິກຂຸກໍບໍ່ມີ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາອະມະນຸດຜູ້ຍິງ ຯລຯ ສັດເດຍຣັດສານໂຕແມ່ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ ມາຫາພິກຂຸແລ້ວໃຫ້ໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຂອງອຸພະ

ໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານມີເຄື່ອງຫຸ້ມ ຂອງພິກຂຸບໍ່ມີ ຯລຯ ຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານບໍ່ມີເຄື່ອງຫຸ້ມ ຂອງພິກຂຸມີ ຯລຯ ຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ ມີເຄື່ອງຫຸ້ມ ຂອງພິກຂຸກໍມີ ຯລຯ ຂອງອຸພະໂຕພະຍັນຊະນະກະ ທີ່ເປັນສັດເດຍຣັດສານບໍ່ມີເຄື່ອງຫຸ້ມ ຂອງພິກຂຸກໍບໍ່ມີ ຖ້າພິກຂຸນັ້ນຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕື່ນ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຫຼັບ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານເມົາ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານວິກົນຈະລິດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານເຜີສະຕິ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນໂດຍສ່ວນຫຼາຍມາ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ພາອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍ ມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ທະວານເບົານັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານມີເຄື່ອງຫຸ້ມ ຂອງພິກຂຸບໍ່ມີ ຯລຯ ຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານບໍ່ມີເຄື່ອງຫຸ້ມຂອງພິກຂຸມີ ຯລຯ ຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານມີເຄື່ອງຫຸ້ມ ຂອງພິກຂຸກໍມີ ຯລຯ ຂອງອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານບໍ່ມີເຄື່ອງຫຸ້ມຂອງພິກຂຸກໍບໍ່ມີ ຖ້າພິກຂຸນັ້ນ ຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

[໖໘] ພວກພິກຂຸຜູ້ເປັນສັດຕູກັນ ພາບັນເດາະທີ່ເປັນມະນຸດ ຯລຯ ບັນເດາະທີ່ເປັນອະມະນຸດ ຯລຯ ບັນເດາະທີ່ເປັນສັດເດຍຣັດສານ ຯລຯ ມະນຸດຜູ້ຊາຍ ຯລຯ ອະມະນຸດຜູ້ຊາຍ ຯລຯ ສັດເດຍຣັດສານໂຕຜູ້ມາຫາພິກຂຸແລ້ວໃຊ້ທະວານໜັກນັ່ງເຕັ່ງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຂອງສັດເດຍຣັດສານໂຕຜູ້ມີເຄື່ອງຫຸ້ມ ຂອງພິກຂຸບໍ່ມີ ຯລຯ ຂອງສັດດີຣັດສານໂຕຜູ້ບໍ່ມີເຄື່ອງຫຸ້ມ ຂອງພິກຂຸມີ ຯລຯ ຂອງສັດເດຍຣັດສານໂຕຜູ້ມີເຄື່ອງຫຸ້ມ ຂອງພິກຂຸກໍມີ ຯລຯ ຂອງສັດເດຍຣັດສານໂຕຜູ້ບໍ່ມີເຄື່ອງຫຸ້ມ ຂອງພິກຂຸກໍບໍ່ມີ ຖ້າພິກຂຸນັ້ນຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູ ພາສັດເດຍຣັດສານໂຕຜູ້ຕື່ນ ຯລຯ ສັດເດຍຣັດສານໂຕຜູ້ຫຼັບ ຯລຯ ສັດເດຍຣັດສານໂຕຜູ້ເມົາ ຯລຯ ສັດເດຍຣັດສານໂຕຜູ້ວິກົນຈະລິດ ຯລຯ ສັດເດຍຣັດສານໂຕຜູ້ເຜີສະຕິ ຯລຯ ສັດເດຍຣັດສານ ໂຕຜູ້ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ສັດເດຍຣັດສານໂຕຜູ້ຕາຍແລ້ວບໍ່ຖືກສັດກັດກິນ ໂດຍສ່ວນຫຼາຍມາ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ບາງພວກພາສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍມາຫາພິກຂຸແລ້ວ ໃຊ້ທະວານໜັກນັ່ງເຕັງອົງຄະຊາດ ຯລຯ ໃຊ້ປາກອົມອົງຄະຊາດ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

## ວ່າດ້ວຍເລື້ອງບໍ່ມີເຄື່ອງຫຸ້ມ

[໖໓] ພວກພິກຂຸຜູ້ເປັນສັດຕູ ພາພິກຂຸໄປຫາແມ່ຍິງແລ້ວ ໃຫ້ໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ທາງທະວານເບົາ ທາງປາກ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາພິກຂຸໄປຫາແມ່ຍິງຕື່ນ ຯລຯ ແມ່ຍິງຫຼັບ ຯລຯ ແມ່ຍິງເມົາ ຯລຯ ແມ່ຍິງວິກົນຈະລິດ ຯລຯ ແມ່ຍິງເຜີສະຕິ ຯລຯ ແມ່ຍິງທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ແມ່ຍິງທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນໂດຍສ່ວນຫຼາຍ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ພາພິກຂຸໄປຫາແມ່ຍິງທີ່ຕາຍແລ້ວ ຖືກສັດກັດກິນໂດຍສ່ວນຫຼາຍແລ້ວໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງທະວານເບົາ ຯລຯ ທາງປາກ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາພິກຂຸໄປຫາອະມະນຸດຜູ້ຍິງ ຯລຯ ສັດເດຍຣັດສານໂຕແມ່ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ຯລຯ ອຸພະໂຕພະຍັນຊະນະກະ ທີ່ເປັນສັດເດຍຣັດສານ ຯລຯ ບັນເດາະທີ່ເປັນມະນຸດ ຯລຯ ບັນເດາະທີ່ເປັນອະມະນຸດ ຯລຯ ບັນເດາະທີ່ເປັນສັດເດຍຣັດສານ ຯລຯ ມະນຸດຜູ້ຊາຍ ຯລຯ ອະມະນຸດຜູ້ຊາຍ ຯລຯ ພາໄປຫາສັດເດຍຣັດສານໂຕຜູ້ແລ້ວໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງປາກ ຯລຯ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາພິກຂຸໄປຫາສັດເດຍຣັດສານໂຕຜູ້ຕື່ນ ຯລຯ ສັດເດຍຣັດສານໂຕຜູ້ຫຼັບ ຯລຯ ສັດເດຍຣັດສານໂຕຜູ້ເມົາ ຯລຯ ສັດເດຍຣັດສານໂຕຜູ້ວິກົນຈະລິດ ຯລຯ ສັດເດຍຣັດສານໂຕຜູ້ເຜີສະຕິ ຯລຯ ສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ພາໄປຫາສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວແຕ່ຍັງບໍ່ຖືກສັດກັດກິນໂດຍສ່ວນຫຼາຍ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ບາງພວກພາພິກຂຸໄປຫາສັດເດຍຣັດສານທີ່ຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍ ແລ້ວໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງປາກ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

## ວ່າດ້ວຍເລື້ອງມີເຄື່ອງຫຸ້ມ

[໖໔] ພວກພິກຂຸຜູ້ເປັນສັດຕູກັນພາພິກຂຸໄປຫາແມ່ຍິງແລ້ວໃຫ້ໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງທະວານເບົາ ຯລຯ ທາງປາກ ຂອງພິກຂຸມີເຄື່ອງຫຸ້ມ ຂອງແມ່ຍິງບໍ່ມີ ຯລຯ ຂອງພິກຂຸບໍ່ມີເຄື່ອງຫຸ້ມ ຂອງແມ່ຍິງມີ ຯລຯ ຂອງພິກຂຸມີເຄື່ອງຫຸ້ມ ຂອງແມ່ຍິງກໍມີ ຯລຯ ຂອງພິກຂຸບໍ່ມີເຄື່ອງຫຸ້ມ ຂອງແມ່ຍິງກໍບໍ່ມີ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາພິກຂຸໄປຫາແມ່ຍິງຕື່ນ ຯລຯ ແມ່ຍິງຫຼັບ ຯລຯ ແມ່ຍິງເມົາ ຯລຯ ແມ່ຍິງວິກົນຈະລິດ ຯລຯ ແມ່ຍິງເຜີສະຕິ ຯລຯ ແມ່ຍິງທີ່ຕາຍແລ້ວແຕ່ຍັງບໍ່ຖືກສັດກັດກິນ ຯລຯ ແມ່ຍິງທີ່ຕາຍແລ້ວແຕ່ຍັງບໍ່ຖືກສັດກັດກິນໂດຍສ່ວນຫຼາຍແລ້ວໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງທະວານເບົາ ຯລຯ ທາງປາກ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ບາງພວກພາພິກຂຸໄປຫາແມ່ຍິງທີ່ຕາຍແລ້ວຖືກສັດກັດກິນໂດຍສ່ວນຫຼາຍແລ້ວໃຫ້ໃຊ້ອົງຄະຊາດສອດເຂົ້າທາງທະວານ ໜັກ ຯລຯ ທາງທະວານເບົາ ຯລຯ ທາງປາກ ຖ້າພິກຂຸຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພິກຂຸຜູ້ເປັນສັດຕູກັນ ພາພິກຂຸໄປຫາອະມະນຸດຜູ້ຍິງ ຯລຯ ສັດເດຍຣັດສານໂຕແມ່ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນອະມະນຸດ ຯລຯ ອຸພະໂຕພະຍັນຊະນະກະທີ່ເປັນສັດເດຍຣັດສານ ຯລຯ ບັນເດາະທີ່ເປັນມະນຸດ ຯລຯ ບັນເດາະທີ່ເປັນອະມະນຸດ ຯລຯ ບັນ ເດາະທີ່ເປັນສັດເດຍຣັດສານ ຯລຯ ມະນຸດຜູ້ຊາຍ ຯລຯ ອະມະນຸດຜູ້ຊາຍ ຯລຯ ພາໄປຫາສັດເດຍຣັດສານໂຕຜູ້ແລ້ວໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງປາກ ຂອງພິກຂຸມີເຄື່ອງຫຸ້ມ ຂອງສັດເດຍຣັດສານໂຕຜູ້ບໍ່ມີ ຯລຯ

ຂອງພິກຂຸບໍ່ມີເຄື່ອງຫຸ້ມ ຂອງສັດເດຍຣັດສານໂຕຜູ້ມີ ຯລຯ ຂອງພິກຂຸມີເຄື່ອງຫຸ້ມ ຂອງສັດເດຍຣັດສານໂຕຜູ້ກໍມີ ຯລຯ ຂອງພິກຂຸບໍ່ມີເຄື່ອງຫຸ້ມ ຂອງສັດເດຍຣັດສານໂຕຜູ້ກໍບໍ່ມີ ຖ້າພິກຂຸຍິນດີຂະນະກໍາລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ຕ້ອງອາບັດປາຣາຊິກ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

[໕໕] ພວກພິກຂຸຜູ້ເປັນສັດຕູກັນພາພິກຂຸໄປຫາສັດເດຍຣັດສານໂຕຜູ້ຕື່ນ ຯລຯ ສັດເດຍຣັດສານ ໂຕຜູ້ຫຼັບ ຯລຯ ສັດເດຍຣັດສານໂຕຜູ້ເມົາ ຯລຯ ສັດເດຍຣັດສານໂຕຜູ້ວິກົນຈະລິດ ຯລຯ ສັດເດຍຣັດສານໂຕຜູ້ເຜີສະຕິ ຯລຯ ສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວ ແຕ່ຍັງບໍ່ຖືກສັດກັດກິນ ຯລຯ ພາໄປຫາສັດເດຍຣັດສານ ໂຕຜູ້ທີ່ຕາຍແລ້ວແຕ່ບໍ່ຖືກສັດກັດກິນໂດຍສ່ວນຫຼາຍ ຯລຯ ຖ້າພິກຂຸຍິນດີ ຯລຯ ຕ້ອງອາບັດປາຣາຊິກ ຯລຯ ພາພິກຂຸໄປຫາສັດເດຍຣັດສານໂຕຜູ້ທີ່ຕາຍແລ້ວ ຖືກສັດກັດກິນໂດຍສ່ວນຫຼາຍແລ້ວໃຊ້ອົງຄະຊາດສອດເຂົ້າທາງທະວານໜັກ ຯລຯ ທາງປາກ ຂອງສັດເດຍຣັດສານໂຕຜູ້ມີເຄື່ອງຫຸ້ມ ຂອງພິກຂຸບໍ່ມີ ຯລຯ ຂອງສັດເດຍຣັດສານໂຕຜູ້ບໍ່ມີເຄື່ອງຫຸ້ມ ຂອງພິກຂຸມີ ຯລຯ ຂອງສັດເດຍຣັດສານໂຕຜູ້ມີ ເຄື່ອງຫຸ້ມຂອງພິກຂຸກໍມີ ຯລຯ ຂອງສັດເດຍຣັດສານໂຕຜູ້ບໍ່ມີເຄື່ອງຫຸ້ມ ຂອງພິກຂຸກໍບໍ່ມີ ຖ້າພິກຂຸຍິນດີຂະນະກໍາລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີ ຂະນະຖອດອອກ ຕ້ອງອາບັດຖຸນລັດໄຈ ຯລຯ ບໍ່ຍິນດີ ບໍ່ຕ້ອງອາບັດ

ພວກພຣະຣາຊາຜູ້ເປັນສັດຕູ ພວກໂຈນຜູ້ເປັນສັດຕູ ພວກນັກເລງຜູ້ເປັນສັດຕູ ພວກຄວັກຫົວໃຈທີ່ເປັນສັດຕູ ກໍເພິ່ງຂະຫຍາຍໃຫ້ພິສະດານເໝືອນພວກພິກຂຸຜູ້ເປັນສັດຕູທີ່ໃຫ້ພິສະດານມາແລ້ວ

[໕໖] ພິກຂຸສອດອົງຄະຊາດເຂົ້າມັກທາງມັກ ຕ້ອງອາບັດປາຣາຊິກ

ພິກຂຸສອດອົງຄະຊາດເຂົ້າອະມັກທາງມັກ ຕ້ອງອາບັດປາຣາຊິກ

ພິກຂຸສອດອົງຄະຊາດເຂົ້າມັກທາງອະມັກ ຕ້ອງອາບັດປາຣາຊິກ

ພິກຂຸສອດອົງຄະຊາດເຂົ້າອະມັກທາງອະມັກ ຕ້ອງອາບັດຖຸນລັດໄຈ

ພິກຂຸລັກຫຼັບພິກຂຸທີ່ກໍາລັງຫຼັບ ທ່ານຕື່ນຂຶ້ນຍິນດີ ເພິ່ງໃຫ້ສິກທັງສອງອົງເລີຍ ຫາກທ່ານຕື່ນຂຶ້ນແຕ່ບໍ່ຍິນດີ ໃຫ້ສິກສະເພາະພິກຂຸອົງທີ່ເຮັດຜິດ

ພິກຂຸລັກຫຼັບສາມະເນນທີ່ກໍາລັງຫຼັບ ສາມະເນນຕື່ນຂຶ້ນຍິນດີ ເພິ່ງໃຫ້ສິກທັງສອງອົງເລີຍ ຫາກສາມະເນນຕື່ນຂຶ້ນແຕ່ບໍ່ຍິນດີ ເພິ່ງໃຫ້ສິກສະເພາະພິກຂຸອົງທີ່ເຮັດຜິດ

ສາມະເນນລັກຫຼັບພິກຂຸທີ່ກໍາລັງຫຼັບ ທ່ານຕື່ນຂຶ້ນຍິນດີ ເພິ່ງໃຫ້ສິກທັງສອງອົງເລີຍ ຫາກທ່ານຕື່ນຂຶ້ນແຕ່ບໍ່ຍິນດີ ເພິ່ງໃຫ້ສິກສະເພາະສາມະເນນອົງທີ່ເຮັດຜິດ

ສາມະເນນລັກຫຼັບສາມະເນນທີ່ກໍາລັງຫຼັບ ທ່ານຕື່ນຂຶ້ນຍິນດີ ເພິ່ງໃຫ້ສິກທັງສອງອົງເລີຍ ຫາກທ່ານຕື່ນຂຶ້ນແຕ່ບໍ່ຍິນດີ ເພິ່ງໃຫ້ສິກສະເພາະສາມະເນນອົງທີ່ເຮັດຜິດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຮູ້ສຶກໂຕ
໒. ພິກຂຸບໍ່ຍິນດີ
໓. ພິກຂຸວິກົນຈະລິດ
໔. ພິກຂຸມີຈິດຟຸ້ງຊ່ານ
໕. ພິກຂຸຜູ້ກະສັບກະສ່າຍຍ້ອນເວທະນາ
໖. ພິກຂຸຕົ້ນບັນຍັດ

**ສັນຖະຕະພານະວານ ຈົບ**

## ຄາຖາລວມວິນີຕະວັດຖຸ

## ເລື້ອງທີ່ຊົງວິນິດໄສແລ້ວ

| | | | |
|---|---|---|---|
| ເລື້ອງລີງໂຕແມ່ | ໑ ເລື້ອງ | ເລື້ອງພວກພິກຂຸວັດຊີບຸດ | ໑ ເລື້ອງ |
| ເລື້ອງປອມເປັນຄະລິຫັດ | ໑ ເລື້ອງ | ເລື້ອງເປືອຍກາຍ | ໑ ເລື້ອງ |
| ເລື້ອງປອມເປັນເດຍຣະຖີ | ໆ ເລື້ອງ | ເລື້ອງເດັກແມ່ຍິງ | ໑ ເລື້ອງ |
| ເລື້ອງພິກຂຸນິອຸບົນວັນນາ | ໑ ເລື້ອງ | ເລື້ອງເພດກັບ | ໔ ເລື້ອງ |
| ເລື້ອງມານດາ | ໑ ເລື້ອງ | ເລື້ອງທິດາ | ໑ ເລື້ອງ |
| ເລື້ອງນ້ອງສາວ | ໑ ເລື້ອງ | ເລື້ອງອະດີດພັນລະຍາ | ໑ ເລື້ອງ |
| ເລື້ອງພິກຂຸຫຼັງອ່ອນ | ໑ ເລື້ອງ | ເລື້ອງພິກຂຸອົງຄະຊາດຍາວ | ໑ ເລື້ອງ |
| ເລື້ອງບາດແຜ | ໔ ເລື້ອງ | ເລື້ອງຮູບປັ້ນ | ໑ ເລື້ອງ |
| ເລື້ອງຕຸ໊ກກະຕາໄມ້ | ໑ ເລື້ອງ | ເລື້ອງພຣະສຸນທອນ | ໑ ເລື້ອງ |
| ເລື້ອງແມ່ຍິງ | ໔ ເລື້ອງ | ເລື້ອງປ່າຊ້າ | ໕ ເລື້ອງ |
| ເລື້ອງກະດູກ | ໑ ເລື້ອງ | ເລື້ອງນາງນາກ | ໑ ເລື້ອງ |
| ເລື້ອງນາງຍັກຂິນີ | ໑ ເລື້ອງ | ເລື້ອງນາງເຜດ | ໑ ເລື້ອງ |
| ເລື້ອງບັນເດາະ | ໑ ເລື້ອງ | ເລື້ອງພິກຂຸຜູ້ມີກາຍປະສາດພິການ | ໑ ເລື້ອງ |
| ເລື້ອງຈັບຕ້ອງ | ໑ ເລື້ອງ | | |

ເລື້ອງພຣະອະຣະຫັນຊາວເມືອງພັດທິຍະຫຼັບ ໑ ເລື້ອງ

ເລື້ອງພິກຂຸຊາວນະຄອນສາວັດຖີ ໔ ເລື້ອງ

ເລື້ອງພິກຂຸຊາວມັນລະນະຄອນເວສາລີ ໓ ເລື້ອງ
ເລື້ອງພິກຂຸໄຂປະຕູນອນ ໑ ເລື້ອງ
ເລື້ອງພິກຂຸຊາວເມືອງພາຣຸກັດສະຝັນ ໑ ເລື້ອງ

| | | | |
|---|---|---|---|
| ເລື້ອງອຸປາສິກາຊື່ສຸປັບພາ | ໗ ເລື້ອງ | ເລື້ອງອຸປາສິກາຊື່ສັດທາ | ໗ ເລື້ອງ |
| ເລື້ອງພິກຂຸນີ | ໑ ເລື້ອງ | ເລື້ອງສິກຂະມານາ | ໑ ເລື້ອງ |
| ເລື້ອງສາມະເນຣີ | ໑ ເລື້ອງ | ເລື້ອງແມ່ຍິງແພດສະຫຍາ | ໑ ເລື້ອງ |
| ເລື້ອງພິກຂຸບັນເດາະ | ໑ ເລື້ອງ | ເລື້ອງແມ່ຍິງຄະລືຫັດ | ໑ ເລື້ອງ |
| ເລື້ອງໃຫ້ພິກຂຸຜັດກັນ | ໑ ເລື້ອງ | ເລື້ອງພຣະຜູ້ເຖົ້າ | ໑ ເລື້ອງ |
| ເລື້ອງລູກເນື້ອ | ໑ ເລື້ອງ | | |

## ວິນີຕະວັດຖຸ

## ເລື້ອງລີງໂຕແມ່ ໑ ເລື້ອງ

[໕໗] ສະໄໝນັ້ນ ພິກຂຸອົງໜຶ່ງເສບເມຖຸນທຳກັບນາງລີງ ເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງ ອາບັດປາຣາຊິກ" (ເລື້ອງທີ ໑)

## ເລື້ອງພວກພິກຂຸວັດຊີບຸດ ໑ ເລື້ອງ

ສະໄໝນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີຫຼາຍອົງ ຍັງບໍ່ບອກຄືນສິກຂາບໍ່ເປີດເຜີຍຄວາມທໍ້ແທ້ ພາກັນເສບເມຖຸນທຳ ເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໒)

## ເລື້ອງປອມເປັນຄະລືຫັດ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ປອມເປັນຄະລືຫັດໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໓)

## ເລື້ອງເປືອຍກາຍ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ເປືອຍກາຍໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔)

## ເລື້ອງປອມເປັນເດຍຣະຖີ ໗ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງຜ້າຄາກອງໄປເສບເມຖຸນທຳ ດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໕)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງເປືອກໄມ້ຄາກອງໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໖)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງຜ້າແຜ່ນແປ້ນຄາກອງ ໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດ ສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໗)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງຜ້າຕ່ຳດ້ວຍຜົມຄົນໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງຜ້າຕ່ຳດ້ວຍຂົນຈາມະຣີໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໙)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງຜ້າຕ່ຳດ້ວຍຂົນປີກນົກເຄົ້າໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຸ່ງໜັງເສືອໄປເສບເມຖຸນທຳດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑)

## ເລື້ອງເດັກຍິງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງທ່ຽວບິນທະບາດ ເຫັນເດັກຍິງນອນເທິງຕັ່ງ ເກີດຄວາມກຳໜັດຈຶ່ງສອດນິ້ວຫົວໂປ້ມືເຂົ້າໃນອົງກຳເນີດຂອງເດັກຍິງ ເດັກຍິງນັ້ນຕາຍ ທ່ານເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໑໔)

## ເລື້ອງພິກຂຸນີອຸບົນວັນນາ ໑ ເລື້ອງ

[໖໗] ສະໄໝນັ້ນ ຊາຍໜຸ່ມຄົນໜຶ່ງມີຄວາມຮັກແພງພິກຂຸນີອຸບົນວັນນາ ວັນໜຶ່ງເມື່ອພິກຂຸນີໄປບິນທະບາດໃນໝູ່ບ້ານ ຈຶ່ງເຂົ້າໄປຈອບຢູ່ໃນກຸຕິ ພິກຂຸນີອຸບົນວັນນາກັບຈາກບິນທະບາດຫຼັງຈາກສັນອາຫານ ລ້າງຕີນແລ້ວເຂົ້າກຸຕິ ນັ່ງເທິງຕຽງ ທັນໃດນັ້ນເຂົາຈຶ່ງອອກມາຂົ່ມຂືນພິກຂຸນີ ພິກຂຸນີໄປບອກພິກຂຸນີທັງຫຼາຍ ພິກຂຸນີທັງຫຼາຍຈຶ່ງບອກເລື້ອງນັ້ນແກ່ພິກຂຸທັງຫຼາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸນີອຸບົນວັນນານັ້ນບໍ່ຍິນດີ ບໍ່ຕ້ອງອາບັດ" (ເລື້ອງທີ ໑໕)

## ເລື້ອງເພດກັບ ໔ ເລື້ອງ

[໖໘] ສະໄໝນັ້ນ ພິກຂຸອົງໜຶ່ງ ເພດກັບກາຍເປັນແມ່ຍິງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ມີພຣະພຸດທານຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖືອຸປັດຊາເດີມ ໃຫ້ຖືອຸປະສົມບົດເດີມ ນັບພັນສາເດີມ ແລະໃຫ້ຢູ່ຮ່ວມກັບພິກຂຸນີທັງຫຼາຍໄດ້ ເຮົາອະນຸຍາດໃຫ້ປົງອາບັດຂອງພິກຂຸທັງຫຼາຍທີ່ທົ່ວໄປກັບພິກຂຸນີທັງຫຼາຍໃນສຳນັກພິກຂຸນີ ທ່ານບໍ່ຕ້ອງອາບັດຂອງພິກຂຸທັງຫຼາຍທີ່ບໍ່ທົ່ວໄປກັບພິກຂຸນີທັງຫຼາຍ" (ເລື້ອງທີ ໑໘)

ສະໄໝນັ້ນ ພິກຂຸນີອົງໜຶ່ງ ເພດກັບກາຍເປັນຊາຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ມີພຣະພຸດທານຸຍາດວ່າ “ເຮົາອະນຸຍາດໃຫ້ຖືອຸປັດຊາເດີມ ໃຫ້ຖືອຸປະສົມບົດເດີມ ນັບພັນສາເດີມແລະໃຫ້ຢູ່ຮ່ວມກັບພິກຂຸທັງຫຼາຍໄດ້ ເຮົາອະນຸຍາດໃຫ້ປົງອາບັດຂອງພິກຂຸນີທັງຫຼາຍທີ່ທົ່ວໄປກັບພິກຂຸໃນສຳນັກພິກຂຸ ທ່ານບໍ່ຕ້ອງອາບັດຂອງພິກຂຸນີທັງຫຼາຍທີ່ບໍ່ທົ່ວໄປກັບພິກຂຸທັງຫຼາຍ” (ເລື້ອງທີ ໑໕)

## ເລື້ອງມານດາ ໑ ເລື້ອງ

[໗໐] ສະໄໝນັ້ນ ພິກຂຸອົງໜຶ່ງ ເສບເມຖຸນທຳກັບມານດາ ດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໑໖)

## ເລື້ອງທິດາ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ເສບເມຖຸນທຳກັບທິດາ ດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໑໗)

## ເລື້ອງນ້ອງສາວ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ເສບເມຖຸນທຳກັບນ້ອງສາວດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໑໘)

## ເລື້ອງອະດີດພັນລະຍາ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ເສບເມຖຸນທຳກັບອະດີດພັນລະຍາ ດ້ວຍຄິດວ່າ ແນວນີ້ ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໑໙)

## ເລື້ອງພິກຂຸຫຼັງອ່ອນ ໑ ເລື້ອງ

[໗໑] ສະໄໝນັ້ນ ພິກຂຸຫຼັງອ່ອນອົງໜຶ່ງ ມີຄວາມກຳໜັດຫຼາຍ ໃຊ້ປາກອົມອົງຄະຊາດຂອງຕົນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໐)

## ເລື້ອງພິກຂຸອົງຄະຊາດຍາວ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີອົງຄະຊາດຍາວ ມີຄວາມກຳໜັດຫຼາຍ ສອດອົງຄະຊາດເຂົ້າທາງທະວານໜັກຂອງຕົນແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໑)

## ເລື້ອງບາດແຜ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງພົບສົບມີບາດແຜຢູ່ໃກ້ອົງກຳເນີດ ຈຶ່ງສອດອົງຄະຊາດເຂົ້າໃນອົງກຳເນີດສົບແລ້ວຖອດອອກທາງບາດແຜດ້ວຍຄິດວ່າ ແນວນີ້ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໘)

ສະໄໝນັ້ນ ພິກຂຸອົງໜຶ່ງພົບສົບມີບາດແຜຢູ່ໃກ້ອົງກຳເນີດ ຈຶ່ງສອດອົງຄະຊາດເຂົ້າໃນບາດແຜແລ້ວຖອດອອກທາງອົງກຳເນີດສົບດ້ວຍຄິດວ່າ ແນວນີ້ເຮົາຈະບໍ່ຕ້ອງອາບັດ ແລ້ວເກີດຄວາມຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໙)

## ເລື້ອງຮູບປັ້ນ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ໃຊ້ອົງຄະຊາດສຽດສີເຄື່ອງໝາຍເພດ ຮູບປັ້ນແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ” (ເລື້ອງທີ ໔໔)

## ເລື້ອງຕຸ໊ກກະຕາໄມ້ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ໃຊ້ອົງຄະຊາດສຽດສີເຄື່ອງໝາຍເພດ ຕຸ໊ກກະຕາໄມ້ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ” (ເລື້ອງທີ ໘໕)

## ເລື້ອງພຣະສຸນທອນ ໑ ເລື້ອງ

[໗໘] ສະໄໝນັ້ນ ພຣະສຸນທອນເປັນຊາວນະຄອນຣາຊະຄຶ ບວດດ້ວຍສັດທາ ຍ່າງໄປຕາມຖະໜົນ ແມ່ຍິງຄົນໜຶ່ງພົບເຫັນ ໄດ້ກ່າວກັບທ່ານວ່າ “ທ່ານ ນິມົນຖ້າຈັກໜ່ອຍກ່ອນ ຂ້ານ້ອຍຈະໄຫວ້” ນາງໄຫວ້ພ້ອມກັບຮື້ອັນຕະຣະວາສົກຂຶ້ນ ໃຊ້ປາກອົມອົງຄະຊາດ ທ່ານເກີດຄວາມກັງວົນໃຈວ່າ ພຣະ ຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ “ພິກຂຸ ທ່ານຍິນດີບໍ?” “ບໍ່ຍິນດີ ຂ້ານ້ອຍ” “ພິກຂຸ ທ່ານບໍ່ຍິນດີບໍ່ຕ້ອງອາບັດ” (ເລື້ອງທີ ໘໖)

## ເລື້ອງແມ່ຍິງ ໔ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງພົບພິກຂຸແລ້ວກ່າວວ່າ “ນິມົນມາເສບເມຖຸນທຳກັບເທິ້ນຂ້ານ້ອຍ” “ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ” “ນິມົນເທິ້ນຂ້ານ້ອຍ ຂ້ານ້ອຍຈະເຮັດເອງ ທ່ານບໍ່ຕ້ອງເຮັດ ຖ້າເຮັດແບບນີ້ ທ່ານບໍ່ຕ້ອງອາບັດ” ທ່ານໄດ້ເຮັດແບບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໗)

ສະໄໝນັ້ນ ແມ່ຍິງຄົນໜຶ່ງພົບພິກຂຸ ແລ້ວກ່າວວ່າ “ນິມົນມາເສບເມຖຸນທຳກັບເທິ້ນຂ້ານ້ອຍ” “ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ” “ນິມົນເທິ້ນຂ້ານ້ອຍ ນິມົນທ່ານເຮັດ ຂ້ານ້ອຍບໍ່ຕ້ອງເຮັດຖ້າເຮັດແບບນີ້ ທ່ານບໍ່ຕ້ອງອາບັດ” ທ່ານໄດ້ເຮັດແບບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໘)

ສະໄໝນັ້ນ ແມ່ຍິງຄົນໜຶ່ງພົບພິກຂຸ ແລ້ວກ່າວວ່າ “ນິມົນມາເສບເມຖຸນທຳກັບເທິ້ນຂ້ານ້ອຍ” “ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ” “ນິມົນເທິ້ນຂ້ານ້ອຍ ນິມົນພະຍາຍາມພາຍໃນ

ແລ້ວຫຼັ່ງອອກພາຍນອກ ຖ້າເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໙)

ສະໄໝນັ້ນ ແມ່ຍິງຄົນໜຶ່ງ ພົບພິກຂຸແລ້ວກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນພະຍາຍາມພາຍນອກແລ້ວຫຼັ່ງໃສ່ພາຍໃນ ຖ້າເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໐)

## ເລື້ອງປ່າຊ້າ ໕ ເລື້ອງ

[໗໙] ສະໄໝນັ້ນ ພິກຂຸອົງໜຶ່ງໄປປ່າຊ້າ ແນມເຫັນສົບທີ່ຍັງບໍ່ຖືກສັດກັດກິນ ໄດ້ເສບເມຖຸນທຳໃນສົບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດ ສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໑)

ສະໄໝນັ້ນ ພິກຂຸອົງໜຶ່ງໄປປ່າຊ້າ ແນມເຫັນສົບຍັງບໍ່ຖືກສັດກັດກິນໂດຍສ່ວນຫຼາຍ ໄດ້ເສບເມຖຸນທຳໃນສົບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດ ສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໒)

ສະໄໝນັ້ນ ພິກຂຸອົງໜຶ່ງໄປປ່າຊ້າ ແນມເຫັນສົບຖືກສັດກັດກິນໂດຍສ່ວນຫຼາຍ ໄດ້ເສບເມຖຸນທຳໃນສົບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໙໓)

ສະໄໝນັ້ນ ພິກຂຸອົງໜຶ່ງໄປປ່າຊ້າ ແນມເຫັນສົບຫົວຂາດຈຶ່ງສອດອົງຄະຊາດເຂົ້າໄປກະທົບພາຍໃນປາກທີ່ອ້າ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດ ສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໔)

ສະໄໝນັ້ນ ພິກຂຸອົງໜຶ່ງໄປປ່າຊ້າ ແນມເຫັນສົບຫົວຂາດຈຶ່ງສອດອົງຄະຊາດເຂົ້າພາຍໃນປາກທີ່ອ້າບໍ່ໃຫ້ກະທົບອັນໃດແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໓໕)

## ເລື້ອງກະດູກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຫຼົງຮັກແມ່ຍິງຄົນໜຶ່ງ ຕໍ່ມານາງເສຍຊີວິດ ຖືກນໍາໄປຖິ້ມໄວ້ໃນປ່າຊ້າ ກະດູກກະຈັດກະຈາຍ ວັນໜຶ່ງພິກຂຸອົງນັ້ນໄປປ່າຊ້າ ເກັບກະດູກລວມເປັນຮ່າງແລ້ວແຍ່ອົງຄະຊາດລົງທີ່ເຄື່ອງໝາຍເພດ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໓໖)

## ເລື້ອງນາງນາກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເສບເມຖຸນທໍາກັບນາງນາກ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ  ໓໗)

## ເລື້ອງນາງຍັກຂິນີ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເສບເມຖຸນທໍາກັບນາງຍັກຂິນີ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໓໘)

## ເລື້ອງນາງເຜດ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເສບເມຖຸນທໍາກັບນາງເຜດ ແລ້ວເກີດຄວາມກັງວົນໃຈວ່າພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໓໙)

## ເລື້ອງບັນເດາະ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເສບເມຖຸນທຳກັບບັນເດາະ ແລ້ວເກີດຄວາມກັງວົນໃຈວ່າພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໔໐)

## ເລື້ອງພິກຂຸຜູ້ມີກາຍປະສາດພິການ ໑ ເລື້ອງ

ສະໄໝນັ້ນ ພິກຂຸຜູ້ມີກາຍປະສາດພິການອົງໜຶ່ງຄິດວ່າ "ເຮົາບໍ່ຮູ້ສຶກສຸກ ຫຼື ທຸກ ຈຶ່ງບໍ່ຕ້ອງອາບັດ" ຈຶ່ງເສບເມຖຸນທຳ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸຈຶ່ງນຳເລື້ອງນີ້ໄປຂາບທູນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ໂມຄະບຸຣຸດນັ້ນຈະຮູ້ສຶກຫຼື ບໍ່ຮູ້ສຶກກໍຕາມ ກໍຕ້ອງອາບັດປາຣາຊິກ" (ເລື້ອງທີ ໔໑)

## ເລື້ອງຈັບຕ້ອງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຄິດຈະເສບເມຖຸນທຳກັບແມ່ຍິງ ແຕ່ເມື່ອພໍຈັບຕ້ອງເທົ່ານັ້ນກໍເກີດຄວາມເດືອດຮ້ອນໃຈ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດ ສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ"[๑] (ເລື້ອງທີ ໔໘)

## ເລື້ອງພຣະອະຣະຫັນຊາວເມືອງພັດທິຍະຫຼັບ ໑ ເລື້ອງ

[໗໔] ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າຊາຕິຍາວັນ ເຂດເມືອງພັດທິຍະຂະນະທີ່ນອນຫຼັບ ອະໄວຍະວະທຸກສ່ວນຂອງທ່ານຖືກລົມລຳເພີຍພັດໃຫ້ແຂງຕົວ ແມ່ຍິງຄົນໜຶ່ງພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ກະທຳການຈົນພໍໃຈແລ້ວຈາກໄປ ພິກຂຸທັງຫຼາຍເຫັນອົງຄະຊາດເປິະເປື້ອນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ອົງຄະຊາດແຂງຕົວໄດ້ດ້ວຍເຫດ ໕ ຢ່າງ ຄື ກຳໜັດ ປວດອຸດຈາຣະ ປວດປັດສາວະ ຖືກລົມລຳເພີຍພັດ ຖືກບົ້ງຂົບ ອົງຄະຊາດຈະແຂງຕົວຍ້ອນເຫດ ໕ ຢ່າງນີ້ ພິກຂຸທັງຫຼາຍ ຂໍ້ທີ່ອົງຄະຊາດຂອງພິກຂຸນັ້ນຈະແຂງຕົວຍ້ອນຄວາມກຳໜັດນັ້ນເປັນໄປບໍ່ໄດ້ ຍ້ອນພິກຂຸນັ້ນ ເປັນພຣະອະຣະຫັນ ພິກຂຸທັງຫຼາຍ ພິກຂຸນັ້ນບໍ່ຕ້ອງອາບັດ" (ເລື້ອງທີ ໔໓)

## ເລື່ອງພິກຂຸຊາວນະຄອນສາວັດຖີ ໔ ເລື່ອງ

ສະໄໝນັ້ນ ພິກຂຸອົງໜຶ່ງ ນອນກາງເວັນໃນປ່າອັນທະວັນ ເຂດນະຄອນສາວັດຖີ ແມ່ຍິງລ້ຽງງົວຄົນໜຶ່ງໄປພົບຈຶ່ງນັ່ງຄ່ອມອົງຄະຊາດ ທ່ານຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໔)

ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າອັນທະວັນ ເຂດນະຄອນສາວັດຖີ ແມ່ຍິງລ້ຽງແບ້ຄົນໜຶ່ງພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ທ່ານຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໕)

ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າອັນທະວັນ ເຂດນະຄອນສາວັດຖີ ແມ່ຍິງຫາຟືນຄົນໜຶ່ງພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ທ່ານຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໔໖)

ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າອັນທະວັນ ເຂດນະຄອນສາວັດຖີ ແມ່ຍິງຂົນມູນງົວຄົນໜຶ່ງ ພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ທ່ານຍິນດີຂະນະກຳລັງສອດເຂົ້າໄປ ຍິນດີຂະນະສອດເຂົ້າໄປແລ້ວ ຍິນດີຂະນະຢຸດຢູ່ ຍິນດີຂະນະຖອດອອກ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງ ອາບັດປາຣາຊິກ” (ເລື້ອງທີ ໔໗)

## ເລື້ອງພິກຂຸຊາວມັນລະນະຄອນເວສາລີ ໓ ເລື້ອງ

[໗໕] ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າມະຫາວັນ ເຂດນະຄອນເວສາລີ ແມ່ຍິງຄົນໜຶ່ງພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ທຳການຈົນພໍໃຈແລ້ວຢືນຫົວຂວນຢູ່ໃກ້ ໆ ພິກຂຸ

ນັ້ນຕື່ນຂຶ້ນມາ ກ່າວກັບແມ່ຍິງນັ້ນວ່າ "ນີ້ເປັນການກະທຳຂອງທ່ານບໍ" "ແມ່ນແລ້ວ ນີ້ເປັນການກະທຳຂອງຂ້ານ້ອຍ" ທ່ານເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຮູ້ບໍ" "ບໍ່ຮູ້ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຮູ້ ບໍ່ຕ້ອງອາບັດ" (ເລື້ອງທີ ໔໗)

[໗໖] ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າມະຫາວັນ ເຂດນະຄອນເວສາລີ ຂະນະທີ່ນອນຫຼັບນັ່ງອີງຕົ້ນໄມ້ ແມ່ຍິງຄົນໜຶ່ງພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ທ່ານຟ້າວລຸກຂຶ້ນທັນທີ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຍິນດີບໍ?" "ບໍ່ຍິນດີ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຍິນດີ ບໍ່ຕ້ອງອາບັດ" (ເລື້ອງທີ ໔໙)

ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນປ່າມະຫາວັນ ເຂດນະຄອນເວສາລີ ຂະນະທີ່ນອນຫຼັບອີງຕົ້ນໄມ້ ແມ່ຍິງຄົນໜຶ່ງພົບເຂົ້າຈຶ່ງນັ່ງຄ່ອມອົງຄະຊາດ ທ່ານຂັບໄລ່ນາງກີ້ງໄປ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຍິນດີບໍ?" "ບໍ່ຍິນດີ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຍິນດີບໍ່ຕ້ອງອາບັດ" (ເລື້ອງທີ ໕໐)

## ເລື້ອງພິກຂຸເປີດປະຕູນອນ ໑ ເລື້ອງ

[໗໗] ສະໄໝນັ້ນ ພິກຂຸອົງໜຶ່ງນອນກາງເວັນໃນກູຕາຄານສາລາປ່າມະຫາວັນ ເຂດນະຄອນເວສາລີ ຂະນະທີ່ເປີດປະຕູນອນຫຼັບ ອະໄວຍະວະທຸກສ່ວນຂອງທ່ານຖືກລົມລຳເພີຍໃຫ້ແຂງຕົວ ຄັ້ງນັ້ນມີແມ່ຍິງຫຼາຍຄົນຖືຂອງຫອມ ແລະ ດອກໄມ້ພາກັນໄປອາຣາມ ແນມໄປທີ່ວິຫານ ເຫັນພິກຂຸນັ້ນ ຈຶ່ງໄປນັ່ງຄ່ອມອົງຄະຊາດ ກະທຳການຈົນພໍໃຈແລ້ວກ່າວຊົມເຊີຍພິກຂຸນັ້ນວ່າ "ເປັນຜູ້ຊາຍປະເສີດແທ້ນໍ" ຈາກນັ້ນໄດ້ຍົກຂອງຫອມ ແລະ ດອກໄມ້ພາກັນຈາກໄປ ພິກຂຸ ທັງຫຼາຍເຫັນອົງຄະຊາດ (ຂອງພິກຂຸຜູ້ຫຼັບ) ເປິະເປື້ອນ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ອົງຄະຊາດແຂງຕົວໄດ້ດ້ວຍເຫດ ໕ ຢ່າງ ຄື ກຳໜັດ ປວດອຸດຈາຣະ ປວດປັດສາວະ ຖືກລົມລຳເພີຍພັດ ຖືກບົ້ງຂົບ ອົງຄະຊາດຈະແຂງຕົວ ຍ້ອນເຫດ ໕ ຢ່າງນີ້ ພິກຂຸທັງຫຼາຍ ຂໍ້ທີ່ອົງຄະຊາດຂອງພິກຂຸນັ້ນຈະແຂງຕົວ ຍ້ອນຄວາມກຳໜັດນັ້ນ ເປັນໄປບໍ່ໄດ້ ຍ້ອນພິກຂຸນັ້ນເປັນພຣະອະຣະຫັນ ພິກຂຸທັງຫຼາຍ ພິກຂຸນັ້ນບໍ່ຕ້ອງອາບັດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຈະຫຼັບຫຼີກພັກຜ່ອນກາງເວັນປິດປະຕູແລ້ວຈຶ່ງຫຼັບຫຼີກພັກຜ່ອນ" (ເລື້ອງທີ ໕໑)

## ເລື້ອງພິກຂຸຊາວເມືອງພາຣຸກັດສະຝັນ ໑ ເລື້ອງ

[ກ໘] ສະໄໝນັ້ນ ພິກຂຸຊາວເມືອງພາຣຸກັດສະອົງໜຶ່ງ ຝັນວ່າໄດ້ເສບເມຖຸນທຳກັບອະດີດພັນລະຍາ ຈຶ່ງຄິດວ່າ ເຮົາບໍ່ແມ່ນສະມະນະ ຈັກສິກ ຂະນະຍ່າງໄປເມືອງພາຣຸກັດສະໃນລະຫວ່າງທາງພົບພຣະອຸບາລີ ຈຶ່ງຮຽນໃຫ້ທ່ານຮູ້ ພຣະອຸບາລີຊີ້ແຈ່ງວ່າ "ທ່ານພຽງແຕ່ຝັນບໍ່ຕ້ອງອາບັດ" (ເລື້ອງທີ ໕໘)

## ເລື້ອງອຸປາສິກາຊື່ສຸປັບພາ ໗ ເລື້ອງ

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບບນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເທີ້ນ ຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນ ຂ້ານ້ອຍ ນິມົນສຽດສີໃສ່ລະຫວ່າງຂາອ່ອນ ເຮັດແບບນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໓)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບບນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເທີ້ນ ຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນ ຂ້ານ້ອຍ ນິມົນສຽດສີໃສ່ສາຍບື ເຮັດແບບນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໘)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບບນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເທີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນ ຂ້ານ້ອຍ ນິມົນສຽດສີໃສ່ໜ້າທ້ອງ ເຮັດແບບນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບບນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກ

ເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໕)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັນເທີ້ນ ຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີໃສ່ຂີ້ແຮ້ ເຮັດແບວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໖)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັນເທີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີໃສ່ຄໍ ເຮັດແບວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໗)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັນເທີ້ນຂ້ານ້ອຍ" "ຢ່າເລີຍ ນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີໃສ່ຊ່ອງຫູ ເຮັດແບວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໘)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າ ໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັນເທີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວ

ເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນສຽດສີໃສ່ເກົ້າຜົມ ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕໙)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນສຽດສີໃສ່ງ່າມມື ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໐)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສຸປັບພາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ຂ້ານ້ອຍຈະໃຊ້ມືພະຍາຍາມປ່ອຍອະສຸຈິໃຫ້ ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໑)

## ເລື້ອງອຸປາສິກາຊື່ສັດທາ ໙ ເລື້ອງ

[໗໙] ສະໄໝນັ້ນ ໃນນະຄອນສາວັດຖີ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນສຽດສີໃສ່ລະຫວ່າງຂາອ່ອນ ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະ

ຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໔)

ສະໄໝນັ້ນ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງ   ໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນ ຂ້ານ້ອຍ" "ຢ່າເລີຍນ້ອງສາວ ເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນສຽດສີໃສ່ສາຍບື ເຮັດແບວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບວນັ້ນແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ  "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໓)

ສະໄໝໜຶ່ງ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນສຽດສີໃສ່ໜ້າທ້ອງ ເຮັດແບວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໔)

ສະໄໝໜຶ່ງ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນ ຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເຫີ້ນຂ້ານ້ອຍ ນິມົນສຽດສີໃສ່ຂີ້ແຮ້ ເຮັດແບວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແບວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໕)

ສະໄໝໜຶ່ງ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໄສແບບງົມງວາຍ ມີຄວາມເຫັນແບວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວ

ເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີໃສ່ຄໍ ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໖)

ສະໄໝໜຶ່ງ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເທີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີໃສ່ຊ່ອງຫູ ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໗)

ສະໄໝໜຶ່ງ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເທີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີທີ່ເກົ້າຜົມ ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໘)

ສະໄໝໜຶ່ງ ໃນນະຄອນຣາຊະຄຶ ມີອຸປາສິກາຄົນໜຶ່ງຊື່ ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງ ຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເທີ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເທີ້ນຂ້ານ້ອຍ ນິມົນສຽດສີໃສ່ງ່າມມື ເຮັດແນວນີ້ ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໙)

ສະໄໝໜຶ່ງ ໃນນະຄອນຣາຊະຄືຫ ມີອຸປາສິກາຄົນໜຶ່ງຊື່ສັດທາ ມີຄວາມເຫຼື້ອມໃສແບບງົມງວາຍ ມີຄວາມເຫັນແນວນີ້ວ່າ ແມ່ຍິງຜູ້ຖວາຍເມຖຸນທຳ ຊື່ວ່າໄດ້ຖວາຍທານອັນເລີດ ເມື່ອນາງພົບພິກຂຸອົງໜຶ່ງຈຶ່ງກ່າວວ່າ "ນິມົນມາເສບເມຖຸນທຳກັບເຫິ້ນຂ້ານ້ອຍ" "ຢ່າເລີຍນ້ອງສາວເລື້ອງນີ້ບໍ່ສົມຄວນ" "ນິມົນເຫິ້ນຂ້ານ້ອຍ ຂ້ານ້ອຍຈະໃຊ້ມີພະຍາຍາມປ່ອຍອະສຸຈິໃຫ້ເຮັດແນວນີ້ທ່ານບໍ່ຕ້ອງອາບັດ" ທ່ານໄດ້ເຮັດແນວນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໗໐)

## ເລື້ອງພິກຂຸນີ ໑ ເລື້ອງ

[໗໐] ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍຈັບພິກຂຸໃຫ້ເສບເມຖຸນທຳກັບພິກຂຸນີ ທ່ານທັງສອງຍິນດີ ເພິ່ງໃຫ້ສິກທັງຄູ່ເລີຍ ທັງສອງບໍ່ຍິນດີບໍ່ຕ້ອງອາບັດ (ເລື້ອງທີ ໗໑)

## ເລື້ອງສິກຂະມານາ ໑ ເລື້ອງ

ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍຈັບພິກຂຸໃຫ້ເສບເມຖຸນທຳກັບ ສິກຂະມານາ ທ່ານທັງສອງຍິນດີ ເພິ່ງໃຫ້ສິກທັງຄູ່ເລີຍ ທັງສອງບໍ່ຍິນດີບໍ່ຕ້ອງອາບັດ (ເລື້ອງທີ ໗໒)

## ເລື້ອງສາມະເນຣີ ໑ ເລື້ອງ

ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍ ຈັບພິກຂຸໃຫ້ເສບເມຖຸນທຳກັບສາມະເນຣີ ທ່ານທັງສອງຍິນດີ ເພິ່ງໃຫ້ສິກທັງຄູ່ເລີຍ ທັງສອງບໍ່ຍິນດີ ບໍ່ຕ້ອງອາບັດ (ເລື້ອງທີ ໗໓)

## ເລື້ອງແມ່ຍິງແພດສະຫຍາ ໑ ເລື້ອງ

[໗໑] ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍຈັບພິກຂຸໃຫ້ເສບເມຖຸນທຳກັບແມ່ຍິງແພດສະຫຍາ ພິກຂຸຍິນດີ ເພິ່ງໃຫ້ສິກເລີຍ ຖ້າບໍ່ຍິນດີ ບໍ່ຕ້ອງອາບັດ (ເລື້ອງທີ ໗໔)

## ເລື້ອງບັນເດາະ ໑ ເລື້ອງ

ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍຈັບພິກຂຸໃຫ້ເສບເມຖຸນທຳກັບບັນເດາະ ພິກຂຸຍິນດີ ເພິ່ງໃຫ້ສິກເລີຍ ຖ້າບໍ່ຍິນດີ ບໍ່ຕ້ອງອາບັດ (ເລື້ອງທີ ໗໕)

## ເລື້ອງແມ່ຍິງຄະລືຫັດ ໑ ເລື້ອງ

ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍຈັບພິກຂຸໃຫ້ເສບເມຖຸນທຳກັບແມ່ຍິງຄະລືຫັດ ພິກຂຸຍິນດີ ເພິ່ງໃຫ້ສິກເລີຍ ຖ້າບໍ່ຍິນດີ ບໍ່ຕ້ອງອາບັດ (ເລື້ອງທີ ໆ໖)

## ເລື້ອງໃຫ້ພິກຂຸຜັດກັນ ໑ ເລື້ອງ

ສະໄໝນັ້ນ ໃນນະຄອນເວສາລີ ເຈົ້າຊາຍລິດສະຫວີທັງຫຼາຍຈັບພິກຂຸໃຫ້ເສບເມຖຸນທຳກັບກັນແລະກັນ ທ່ານທັງສອງຍິນດີ ເພິ່ງໃຫ້ສິກທັງຄູ່ເລີຍ ຖ້າບໍ່ຍິນດີ ບໍ່ຕ້ອງອາບັດ (ເລື້ອງທີ ໆໆ)

## ເລື້ອງພຣະຜູ້ເຖົ້າ ໑ ເລື້ອງ

[໗໔] ສະໄໝນັ້ນ ພຣະຜູ້ເຖົ້າອົງໜຶ່ງໄປຢ້ຽມອະດີດພັນລະຍາ ຖືກບັງຄັບໃຫ້ສິກ ທ່ານຖອຍໜີຈົນລົ້ມຫງາຍ ນາງຂຶ້ນຄ່ອມອົງຄະຊາດ ທ່ານເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຍິນດີບໍ?" "ບໍ່ຍິນດີ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຍິນດີບໍ່ຕ້ອງອາບັດ" (ເລື້ອງທີ ໆ໗)

## ເລື້ອງລູກເນື້ອ ໑ ເລື້ອງ

[໗໕] ສະໄໝນັ້ນ ພິກຂຸອົງໜຶ່ງຢູ່ໃນປ່າ ລູກເນື້ອມາທີ່ຖ່າຍປັດສາວະຂອງທ່ານແລ້ວອົມອົງຄະຊາດພ້ອມດື່ມນ້ຳປັດສາວະ ທ່ານຍິນດີ ເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ ພິກຂຸ ທ່ານຕ້ອງອາບັດປາຣາຊິກ (ເລື້ອງທີ ໆ໙)

**ປາຣາຊິກສິກຂາບົດທີ ໑ ຈົບ**

# ປາຣາຊິກສິກຂາບົດທີ ໒

## ວ່າດ້ວຍການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້

### ເລື້ອງພຣະທະນິຍະກຸມພະກາຣະບຸດ

[໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພູເຂົາຄິດຊະກູດ ເຂດນະຄອນຣາຊະຄຶ ພິກຂຸຫຼາຍອົງເປັນເພື່ອນເຫັນເພື່ອນຄົບກັນ ຊ່ອຍກັນເຮັດກຸຕິມຸງຫຍ້າ ຢູ່ຈຳພັນສາທີ່ຕີນພູເຂົາອິສິຄິລິ ທ່ານພຣະທະນິຍະກຸມພະກາຣະບຸດກໍເຮັດກຸຕິມຸງຫຍ້າຢູ່ຈຳພັນສາໃນທີ່ນັ້ນ ຕໍ່ເມື່ອລ່ວງໄຕຣມາດໄປແລ້ວ ພິກຂຸເຫຼົ່ານັ້ນຮື້ກຸຕິມຸງຫຍ້າ ເກັບຫຍ້າ ແລະ ໄມ້ໄວ້ແລ້ວພາກັນຫຼີກຈາຣິກໄປໃນຊົນນະບົດ ສ່ວນພຣະທະນິຍະກຸມພະກາຣະບຸດ ຍັງພັກຢູ່ທີ່ນັ້ນຕະຫຼອດລະດູຝົນລະດູໜາວ ແລະ ລະດູຮ້ອນ ວັນໜຶ່ງເມື່ອທ່ານໄປບິນທະບາດໃນໝູ່ບ້ານ ຄົນຫາບຫຍ້າ ຄົນຫາຟືນ ຮື້ກຸຕິຫຍ້າຂອງທ່ານ ແລ້ວຂົນເອົາຫຍ້າແລະໄມ້ໄປ ທ່ານພຣະທະນິຍະກຸມພະກາຣະບຸດໄດ້ຫາຫຍ້າ ແລະ ໄມ້ມາເຮັດກຸຕິຫຍ້າເປັນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ເມື່ອທ່ານໄປບິນທະບາດໃນໝູ່ບ້ານ ຄົນຫາບຫຍ້າ ຄົນຫາຟືນ ໄດ້ຮື້ກຸຕິຫຍ້າຂອງທ່ານແລ້ວຂົນຫຍ້າ ແລະ ໄມ້ໄປ ເປັນຄັ້ງທີ ໓

ທ່ານຄິດວ່າ ເມື່ອເຮົາໄປບິນທະບາດໃນບ້ານ ຄົນຫາບຫຍ້າ ຄົນຫາຟືນ ຮື້ກຸຕິຫຍ້າແລ້ວຂົນຫຍ້າ ແລະ ໄມ້ໄປເຖິງ ໓ ຄັ້ງ ເຮົາມີການສຶກສາດີ ບໍ່ບົກພ່ອງ ສຳເລັດສິລະປະຊ່າງໝໍ້ຫຼຸບເທົ່າອາຈານ ເອົາເທີ້ນ ເຮົາຈະນວດຂີ້ຕົມເຮັດກຸຕິດິນລ້ວນດ້ວຍຕົວເອງ

ດັ່ງນັ້ນ ທ່ານຈຶ່ງນວດຂີ້ຕົມກໍ່ກຸຕິດິນລ້ວນ ແລະລວບລວມຫຍ້າ ໄມ້ແລະຂີ້ງົວແຫ້ງມາສຸມໄຟເຜົາກຸຕິນັ້ນຈົນສຸກ ກຸຕິນັ້ນງົດງາມເປັນຕາເບິ່ງ ມີສີແດງເໝືອນສີແມງເຕົ່າຄຳ (ເວລາລົມພັດ) ສົ່ງສຽງ ເໝືອນສຽງກະດິງ

[໗໕] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດລົງຈາກພູເຂົາຄິດຊະກູດພ້ອມກັບພິກຂຸຈຳນວນຫຼາຍ ທອດພຣະເນດເຫັນກຸຕິອັນງົດງາມໜ້າເບິ່ງ ໜ້າຊົມ ຕັດຖາມວ່າ “ພິກຂຸທັງຫຼາຍນັ້ນອັນໃດໜ້າເບິ່ງ ໜ້າຊົມ ສີເໝືອນແມງເຕົ່າຄຳ” ເມື່ອພິກຂຸທັງຫຼາຍຂາບທູນເລື້ອງນັ້ນ ໃຫ້ຊົງຊາບແລ້ວ ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດນັ້ນບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງໂມຄະບຸຣຸດຈຶ່ງນວດຂີ້ຕົມກໍ່ກຸຕິດິນລ້ວນນໍ ໂມຄະບຸຣຸດນັ້ນຊື່ວ່າບໍ່ໄດ້ມີ ຄວາມອີດູຄວາມອະນຸເຄາະ ຄວາມບໍ່ບຽດບຽນສັດທັງຫຼາຍ ພວກທ່ານຈົ່ງໄປທຳລາຍກຸຕິນັ້ນສາ ຢ່າໃຫ້ເພື່ອນພົມມະຈາຣີໃນພາຍຫຼັງໄດ້ບຽດບຽນໝູ່ສັດເລີຍ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຮັດກຸຕິດິນລ້ວນ ພິກຂຸໃດເຮັດ ຕ້ອງອາບັດທຸກກົດ”

ພິກຂຸເຫຼົ່ານັ້ນຮັບພຣະພຸດທະດີກາແລ້ວພາກັນໄປທີ່ກຸຕິ ຊ່ອຍກັນທຳລາຍກຸຕິນັ້ນ

ໃນຂະນະນັ້ນ ທ່ານພຣະທະນິຍະກຸມພະກາຣະບຸດມາຖາມພິກຂຸເຫຼົ່ານັ້ນວ່າ "ເປັນຫຍັງພວກທ່ານຈຶ່ງທຳລາຍກຸຕິຂອງຂ້ານ້ອຍ" "ທ່ານ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ທຳລາຍ" "ຖ້າພຣະຜູ້ມີພຣະພາກເຈົ້າຜູ້ເປັນທຳສາມີຮັບສັ່ງໃຫ້ທຳລາຍ ກໍທຳລາຍເທີ້ນ"

[໗໖] ຕໍ່ມາ ທ່ານພຣະທະນິຍະກຸມພະກາຣະບຸດຄິດວ່າ ເມື່ອເຮົາໄປບິນທະບາດໃນໝູ່ບ້ານ ຄົນຫາບຫຍ້າ ຄົນຫາຟືນມາຮື້ກຸຕິຫຍ້າ ຂົນຫຍ້າ ແລະ ໄມ້ໄປເຖິງ ໓ ຄັ້ງ ແມ່ນກຸຕິດິນລ້ວນທີ່ເຮັດໄວ້ພຣະຜູ້ມີພຣະພາກເຈົ້າກໍຮັບສັ່ງໃຫ້ທຳລາຍ ເຮົາຮູ້ຈັກພະນັກງານປ່າໄມ້ທີ່ຮັກແພງກັນ ເອີເທີ້ນ ເຮົາຄວນຂໍໄມ້ມາເຮັດກຸຕິໄມ້ ແລ້ວໄປຫາເຈົ້າພະນັກງານປ່າໄມ້ ກ່າວວ່າ "ຈະເລີນພອນ ເມື່ອອາດຕະມາໄປບິນທະບາດໃນໝູ່ບ້ານ ຄົນຫາບຫຍ້າ ຄົນຫາຟືນໄປຮື້ກຸຕິຫຍ້າ ຂົນຫຍ້າ ແລະ ໄມ້ໄປເຖິງ ໓ ຄັ້ງ ແມ່ນກຸຕິດິນລ້ວນທີ່ເຮັດໄວ້ດີແລ້ວ ພຣະຜູ້ມີພຣະພາກເຈົ້າກໍຮັບສັ່ງໃຫ້ທຳລາຍ ທ່ານຈົ່ງໃຫ້ໄມ້ແກ່ອາດຕະມາ ອາດຕະມາຕ້ອງການຈະເຮັດກຸຕິໄມ້"

ເຈົ້າພະນັກງານປ່າໄມ້ຕອບວ່າ "ຂ້ານ້ອຍບໍ່ມີໄມ້ຈະຖວາຍຄູບາໄດ້ ຂ້ານ້ອຍ ຈະມີກໍແຕ່ໄມ້ຂອງຫຼວງທີ່ເກັບໄວ້ຊ້ອມແປງເມືອງໃນເວລາຈຳເປັນ ຖ້າພຣະເຈົ້າແຜ່ນດິນມີຮັບສັ່ງໃຫ້ພຣະຣາດຊະທານ ຄູບາກໍໃຫ້ຄົນໄປຂົນເອົາເທີ້ນ"

ທ່ານພຣະທະນິຍະກຸມພະກາຣະບຸດກ່າວວ່າ "ຈະເລີນພອນ ພຣະເຈົ້າແຜ່ນດິນໄດ້ພຣະຣາດຊະທານໄມ້ນັ້ນໃຫ້ແລ້ວ"

ລຳດັບນັ້ນ ເຈົ້າພະນັກງານປ່າໄມ້ຄິດວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ເວົ້າຈິງ ມີສິນ ມີກັນລະຍານະທຳ ແມ່ນແຕ່ພຣະເຈົ້າແຜ່ນດິນຍັງຊົງເຫຼື້ອມໃສ ພຣະທະນິຍະຄົງບໍ່ກ້າເວົ້າສິ່ງທີ່ພຣະເຈົ້າແຜ່ນດິນຍັງບໍ່ໄດ້ພຣະຣາດຊະທານວ່າ ໄດ້ພຣະຣາດຊະທານແລ້ວ" ລຳດັບນັ້ນ ເຈົ້າພະນັກງານປ່າໄມ້ ຈຶ່ງກ່າວກັບທ່ານພຣະທະນິຍະດັ່ງນີ້ວ່າ "ນິມົນທ່ານໃຫ້ຄົນຂົນໄປເທີ້ນ ຂ້ານ້ອຍ"

ທ່ານພຣະທະນິຍະສັ່ງໃຫ້ຕັດໄມ້ເຫຼົ່ານັ້ນ ເປັນທ່ອນນ້ອຍ ທ່ອນໃຫຍ່ບັນທຸກໃສ່ກວຽນນຳໄປເຮັດກຸຕິໄມ້

## ວັດສະກາຣະພາມກວດຣາດຊະການ

[໗໗] ເວລານັ້ນ ວັດສະກາຣະພາມມະຫາອຳມາດມະຄົດຣັດໄປກວດຣາດຊະການ ເຂົ້າໄປຫາເຈົ້າພະນັກງານປ່າໄມ້ເຖິງທີ່ພັກ ເມື່ອເຖິງແລ້ວໄດ້ກ່າວກັບເຈົ້າພະນັກງານປ່າໄມ້ດັ່ງນີ້ວ່າ "ນີ້ແນ່ະທ່ານ ໄມ້ຂອງຫຼວງທີ່ເກັບໄວ້ສ້ອມແປງເມືອງໃນເວລາຈຳເປັນຢູ່ໄສ"

ເຈົ້າໜ້າທີ່ປ່າໄມ້ຕອບວ່າ "ທ່ານຂ້ານ້ອຍ ພຣະເຈົ້າແຜ່ນດິນໄດ້ພຣະຣາດຊະທານໄມ້ແກ່ພຣະທະນິຍະກຸມພະກາຣະບຸດໄປແລ້ວ"

ວັດສະກາຣະພາມບໍ່ພໍໃຈວ່າ “ເປັນຫຍັງພຣະເຈົ້າແຜ່ນດິນຈຶ່ງໄດ້ພຣະຣາດຊະທານໄມ້ຂອງຫຼວງທີ່ເກັບໄວ້ສ້ອມແປງເມືອງໃນເວລາຈຳເປັນແກ່ພຣະທະນິຍະກຸມພະກາຣະບຸດໄປນໍ” ຈຶ່ງເຂົ້າໄປເຝົ້າພຣະເຈົ້າພິມພິສານຈອມທັບມະຄົດ ເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະເຈົ້າພິມພິສານຈອມທັບມະຄົດດັ່ງນີ້ວ່າ “ໄດ້ຂ່າວວ່າ ພຣະອົງໄດ້ພຣະຣາດຊະທານໄມ້ຂອງຫຼວງທີ່ເກັບໄວ້ສ້ອມແປງເມືອງໃນເວລາຈຳເປັນແກ່ພຣະທະນິຍະກຸມພະກາຣະບຸດໄປແລ້ວ ແມ່ນບໍຂ້ານ້ອຍ”

“ໃຜກ່າວແນວນັ້ນ”

“ເຈົ້າໜ້າທີ່ປ່າໄມ້ ຂ້ານ້ອຍ”

“ຖ້າເຊັ່ນນີ້ ຈົ່ງໄປຮຽກເຈົ້າໜ້າທີ່ປ່າໄມ້ມາ”

ວັດສະກາຣະພາມສັ່ງໃຫ້ເຈົ້າໜ້າທີ່ຄຸມຕົວເຈົ້າໜ້າທີ່ປ່າໄມ້ມາທັນທີ

ພຣະທະນິຍະກຸມພະກາຣະບຸດເຫັນເຈົ້າໜ້າທີ່ປ່າໄມ້ຖືກຄວບຄຸມຕົວໄປຈຶ່ງກ່າວວ່າ “ຈະເລີນພອນ ທ່ານຖືກເຈົ້າໜ້າທີ່ຄວບຄຸມຕົວດ້ວຍເລື້ອງອັນໃດ”

“ເລື້ອງໄມ້ ຂ້ານ້ອຍ”

“ທ່ານຈົ່ງໄປກ່ອນເທີ້ນ ອາດຕະມາຈະນຳໄປ”

ເຈົ້າໜ້າທີ່ປ່າໄມ້ກ່າວວ່າ “ຄູບາຄວນໄປກ່ອນທີ່ຂ້ານ້ອຍຈະເດືອດຮ້ອນ ຂ້ານ້ອຍ”

[໗໗] ພຣະທະນິຍະກຸມພະກາຣະບຸດ ເຂົ້າໄປພຣະຣາດຊະນິເວດຂອງພຣະເຈົ້າພິມພິສານແລ້ວ ນັ່ງເທິງອາສະນະ ຂະນະນັ້ນ ພຣະເຈົ້າພິມພິສານສະເດັດເຂົ້າໄປຫາພຣະທະນິຍະກຸມພະກາຣະບຸດ ຊົງໄຫວ້ແລ້ວປະທັບນັ່ງ ໃນທີ່ສົມຄວນ ຕັດຖາມວ່າ “ຄູບາ ຮູ້ວ່າໄມ້ຂອງຫຼວງທີ່ເກັບໄວ້ສ້ອມແປງເມືອງໃນເວລາຈຳເປັນ ຂ້ານ້ອຍຖວາຍແກ່ຄູບາແທ້ບໍ?”

“ແທ້ ມະຫາບໍພິດ”

“ຄູບາ ຂ້ານ້ອຍເປັນພຣະເຈົ້າແຜ່ນດິນ ມີວຽກງານຫຼວງຫຼາຍ ເຖິງຈະຖວາຍໄປແລ້ວກໍຈື່ບໍ່ໄດ້ ຄູບາໂຜດເຕືອນຄວາມຈຳໃຫ້ຂ້ານ້ອຍດ້ວຍ”

ພຣະທະນິຍະກຸມພະກາຣະບຸດ ທູນວ່າ “ຂໍຖວາຍພຣະພອນ ພຣະອົງຈື່ໄດ້ບໍ່ ຄັ້ງທີ່ພຣະອົງສະເດັດຂຶ້ນຄອງຣາດໃໝ່ ໆ ຊົງເປ່ງພຣະວາຈາວ່າ ຂ້າພະເຈົ້າຖວາຍຫຍ້າ ໄມ້ ແລະ ນ້ຳແກ່ສະມະນະພາມ ຂໍສະມະນະພາມໂຜດໃຊ້ສອຍເທີ້ນ”

“ຄູບາ ຂ້ານ້ອຍຈື່ໄດ້ ທີ່ຂ້ານ້ອຍເວົ້ານັ້ນໝາຍເຖິງສະມະນະພາມຜູ້ມີຄວາມລະອາຍມີຄວາມລະມັດລະວັງ ໃຝ່ການສຶກສາ ມີຄວາມລັງກຽດແມ່ນໃນໂທດເລັກນ້ອຍ ຫຍ້າ ໄມ້ ແລະນ້ຳນັ້ນຍັງບໍ່ໄດ້ມີໃຜຈັບຈອງ ຢູ່ໃນປ່າ ທ່ານຈົ່ງໃຈອ້າງຈະຂົນໄມ້ທີ່ບໍ່ໃຫ້ໄປ ພຣະເຈົ້າແຜ່ນດິນເຊັ່ນຂ້ານ້ອຍຈະຂ້າ ຈອງຈຳ ຫຼື ເນຣະເທດສະມະນະພາມແນວໃດໄດ້ ນິມົນກັບເມືອເທີ້ນ ທ່ານລອດຕົວຍ້ອນຂົນ[໑] ແຕ່ຢ່າໄດ້ເຮັດແນວນີ້ອີກ”

## ປະຊາຊົນຕຳໜິ

ປະຊາຊົນພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ບໍ່ມີຄວາມລະອາຍ ທຸສີນ ມັກເວົ້າຕົວະ ແຕ່ກໍປະຕິນຍາວ່າ ປະພຶດທຳ ປະພຶດສະຫງົບ ປະພຶດພົມມະຈັນ ເວົ້າຈິງ ມີສີນ ມີກັນລະຍານະທຳ ພວກທ່ານບໍ່ມີຄວາມເປັນສະມະນະ ບໍ່ມີຄວາມເປັນພາມ ຄວາມເປັນສະມະນະ ຄວາມເປັນພາມຂອງພວກທ່ານເສື່ອມສິ້ນໄປແລ້ວ ພວກທ່ານຈະເປັນສະມະນະເປັນພາມໄດ້ແນວໃດ ພວກທ່ານປາສະຈາກຄວາມເປັນສະມະນະ ປາສະຈາກຄວາມເປັນພາມ ແມ່ນພຣະເຈົ້າແຜ່ນດິນກໍຍັງຖືກສະມະນະເຫຼົ່ານັ້ນຫຼອກລວງໄດ້ ເປັນຫຍັງຄົນອື່ນຈັກບໍ່ຖືກຫຼອກລວງນໍ"

ພິກຂຸທັງຫຼາຍໄດ້ຍິນປະຊາຊົນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະທະນິຍະກຸມພະກາຣະບຸດຈຶ່ງລັກໄມ້ຂອງຫຼວງທີ່ເຂົາບໍ່ໄດ້ໃຫ້ໄປນໍ" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະທະນິຍະກຸມພະກາຣະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະທະນິຍະກຸມພະກາຣະບຸດວ່າ "ທະນິຍະ ໄດ້ຂ່າວວ່າທ່ານລັກໄມ້ຫຼວງແມ່ນບໍ?" ທ່ານທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແນວນີ້ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ  ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສແລ້ວບາງພວກກໍຈະກາຍເປັນອື່ນໄປ"

ສະໄໝນັ້ນ ມີມະຫາອຳມາດເຄີຍເປັນຜູ້ພິພາກສາຄົນໜຶ່ງບວດຢູ່ໃນໝູ່ພິກຂຸ ນັ່ງຢູ່ບໍ່ໄກພຣະຜູ້ມີພຣະພາກເຈົ້າ ພຣະອົງຈຶ່ງຮັບສັ່ງຖາມພິກຂຸອົງນັ້ນວ່າ "ພຣະເຈົ້າພິມພິສານ ຈອມທັບມະຄົດ ຈັບໂຈນໄດ້ແລ້ວປະຫານແດ່ ຈອງຈຳແດ່ ເນຣະເທດແດ່ ດ້ວຍອັດຕາໂທດຕາມມູນຄ່າຊັບທີ່ລັກມາເທົ່າໃດ"

ພິກຂຸອົງນັ້ນຂາບທູນວ່າ "ດ້ວຍມູນຄ່າ ໑ ບາດແດ່ ຄວນແກ່ ໑ ບາດແດ່ ເກີນກວ່າ ໑ ບາດແດ່ ຂ້ານ້ອຍ"

ສະໄໝນັ້ນ ໃນນະຄອນຣາຊະຄຶ ຊັບ ໑ ບາດ ເທົ່າກັບ ໕ ມາສົກ

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິທ່ານພຣະທະນິຍະກຸມພະກາຣະບຸດ ໂດຍປະການຕ່າງ ໆ ແລ້ວໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ຯລຯ ຄຸນແຫ່ງການຜາຣົບຄວາມພຽນ ແລ້ວຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມກັບເລື້ອງນັ້ນແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໙] **ກໍ ພິກຂຸໃດ ຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ໂດຍສ່ວນແຫ່ງຈິດຄິດຈະລັກ ມີມູນຄ່າເທົ່າກັບອັດຕາໂທດທີ່ພຣະຣາຊາທັງຫຼາຍຈັບໂຈນໄດ້ແລ້ວປະຫານແດ່ ຈອງຈຳແດ່ ເນຣະເທດແດ່ ບໍຣິພາດວ່າ "ເຈົ້າເປັນໂຈນ ເຈົ້າເປັນຄົນພານ ເຈົ້າເປັນຄົນຫຼົງ ເຈົ້າເປັນຂະໂມຍ" ດັ່ງນີ້ ຍ້ອນຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ເຊັ່ນໃດ ພິກຂຸຜູ້ຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ເຊັ່ນນັ້ນ ແມ່ນພິກຂຸນີ້ເປັນປາຣາຊິກ ຫາສັງວາດບໍ່ໄດ້**

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວແນວນີ້ແລ

### ເລື້ອງພຣະທະນິຍະກຸມພະກາຣະບຸດ ຈົບ

## ເລື້ອງພວກພິກຂຸສັບພັກຄີ

[໙໐] ເມື່ອຕໍ່ມາ ພວກພິກຂຸສັບພັກຄີໄປລານຕາກຜ້າຂອງຊ່າງຍ້ອມຜ້າ ແລ້ວພາກັນລັກຫໍ່ຜ້າກັບມາວັດ ແບ່ງກັນ

ພິກຂຸທັງຫຼາຍກ່າວແນວນີ້ວ່າ "ພວກທ່ານມີບຸນຫຼາຍ ຈີວອນຈຶ່ງເກີດຂຶ້ນແກ່ພວກທ່ານຫຼາຍ"

ພວກພິກຂຸສັບພັກຄີ ຕອບວ່າ "ພວກເຮົາຈະມີບຸນມາຈາກໄສນໍ ພວກເຮົາໄປລານຕາກຜ້າຂອງຊ່າງຍ້ອມແລ້ວໄດ້ລັກຫໍ່ຜ້າຂອງຊ່າງຍ້ອມມາຈາກທີ່ນັ້ນ"

ພິກຂຸທັງຫຼາຍຈຶ່ງທ້ວງຕິວ່າ "ທ່ານ ພຣະຜູ້ມີພຣະພາກເຈົ້າໄດ້ຊົງບັນຍັດສິກຂາບົດ ໄວ້ແລ້ວບໍ່ແມ່ນບໍ? ເຫດໃດ ພວກທ່ານຈຶ່ງລັກຫໍ່ຜ້າຂອງຊ່າງຍ້ອມມານໍ"

ພວກພິກຂຸສັບພັກຄີກ່າວແຍ້ງວ່າ "ຈິງ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າໄດ້ຊົງບັນຍັດສິກຂາບົດໄວ້ແລ້ວ ແຕ່ສິກຂາບົດນັ້ນໃຊ້ສະເພາະໃນບ້ານ ບໍ່ແມ່ນໃນປ່າ"

ພິກຂຸເຫຼົ່ານັ້ນກ່າວວ່າ "ພຣະບັນຍັດນັ້ນໃຊ້ໄດ້ ຄື ກັນທັງໃນບ້ານແລະໃນປ່າບໍ່ແມ່ນບໍ? ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງ ພວກທ່ານຈຶ່ງລັກຫໍ່ຜ້າຂອງຊ່າງຍ້ອມມານໍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ

ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ"

ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີ ວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານລັກຫໍ່ຜ້າຂອງຊ່າງຍ້ອມ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳຂອງພວກທ່ານບໍ່ສົມຄວນ ฯลฯ ບໍ່ຄວນເຮັດເລີຍ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງລັກຫໍ່ຜ້າຂອງຊ່າງຍ້ອມມານໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ฯลฯ" ເມື່ອຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ฯลฯ ຄຸນແຫ່ງການຜາຣົບຄວາມພຽນ ແລ້ວຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມກັບເລື້ອງນັ້ນແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໗໑] **ອັນໜຶ່ງ ພິກຂຸໃດຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ໂດຍສ່ວນແຫ່ງຈິດຄິດຈະລັກ ຈາກໝູ່ບ້ານກໍຕາມ ຈາກປ່າກໍຕາມ ມີມູນຄ່າເທົ່າກັບອັດຕາໂທດທີ່ພຣະຣາຊາທັງຫຼາຍຈັບໂຈນໄດ້ແລ້ວ ປະຫານແດ່ ຈອງຈຳແດ່ ເນຣະເທດແດ່ ບໍຣິພາດວ່າ "ເຈົ້າເປັນໂຈນ ເຈົ້າເປັນຄົນພານເຈົ້າເປັນຄົນຫຼົງ ເຈົ້າເປັນຂະໂມຍ" ດັ່ງນີ້ ຍ້ອນຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ເຊັ່ນໃດ ພິກຂຸຜູ້ຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ເຊັ່ນນັ້ນ ແມ່ນພິກຂຸນີ້ກໍເປັນປາຣາຊິກ ຫາສັງວາດບໍ່ໄດ້**

### ເລື້ອງພວກພິກຂຸສັບພັກຄີ ຈົບ

## ສິກຂາບົດວິພັງ

[໗໘] ຄຳວ່າ ອັນໜຶ່ງ ฯลฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ฯลฯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ໝູ່ບ້ານ ໄດ້ແກ່ ໝູ່ບ້ານມີກະຕູບ ໑ ຫຼັງແດ່ ໝູ່ບ້ານມີກະຕູບ ໒ ຫຼັງແດ່ ໝູ່ບ້ານມີກະຕູບ ໓ ຫຼັງແດ່ ໝູ່ບ້ານມີກະຕູບ ໔ ຫຼັງແດ່ ໝູ່ບ້ານມີຄົນຢູ່ແດ່ ໝູ່ບ້ານບໍ່ມີຄົນຢູ່ແດ່ ໝູ່

ບ້ານທີ່ມີຮົ້ວລ້ອມແດ່ ໝູ່ບ້ານບໍ່ມີຮົ້ວລ້ອມແດ່ ໝູ່ບ້ານທີ່ມີໂຮງເຮືອນເໝືອນໂຮງພັກງົວແດ່ ແມ່ນສະຖານທີ່ທີ່ມີໝູ່ກວຽນ ຫຼື ງົວພັກແຮມເກີນກວ່າ ໔ ເດືອນ ກໍຕັດຮຽກວ່າ ເປັນໝູ່ບ້ານ

ທີ່ຊື່ວ່າ ອຸປະຈານໝູ່ບ້ານ ໄດ້ແກ່ ເຂດທີ່ຊາຍມີກຳລັງປານກາງຢືນຢູ່ທີ່ເສົາເຂື່ອນຂອງໝູ່ບ້ານທີ່ມີຮົ້ວລ້ອມ ດີກກ້ອນດິນໄປຕົກລົງ ຫຼື ເຂດທີ່ຊາຍມີກຳລັງປານກາງຢືນຢູ່ທີ່ອຸປະຈານເຮືອນຂອງໝູ່ບ້ານທີ່ບໍ່ມີຮົ້ວລ້ອມ ດີກກ້ອນດິນໄປຕົກລົງ

ທີ່ຊື່ວ່າ ປ່າ ໄດ້ແກ່ ສະຖານທີ່ທີ່ເວັ້ນໝູ່ບ້ານ ແລະອຸປະຈານໝູ່ບ້ານ ນອກນັ້ນຊື່ວ່າ ປ່າ

ທີ່ຊື່ວ່າ ຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ ໄດ້ແກ່ ຊັບທີ່ເຈົ້າຂອງບໍ່ໃຫ້ ບໍ່ສະລະ ບໍ່ບໍລິຈາກ ຍັງຖືຮັກສາຄຸ້ມຄອງຢູ່ ຖືກຳມະສິດຢູ່ ເປັນຊັບທີ່ຄົນອື່ນຫວງແຫນ ນັ້ນຊື່ວ່າ ຊັບທີ່ເຈົ້າຂອງບໍ່ໄດ້ໃຫ້

ຄຳວ່າ ໂດຍສ່ວນແຫ່ງຈິດຄິດຈະລັກ ຄື ມີໄຖຍະຈິດ ໄດ້ແກ່ ຄິດຈະລັກ

ຄຳວ່າ ຖືເອົາ ໄດ້ແກ່ ຕູ່ ຊິງ ສໍ້ ເຄື່ອນໄຫວອິລິຍາບົດ ເຮັດໃຫ້ຊັບເຄື້ອນທີ່ໃຫ້ລ່ວງເຂດທີ່ໝາຍ

ທີ່ຊື່ວ່າ ເຊັ່ນໃດ ຄື ໑ ບາດແດ່ ຄວນແກ່ ໑ ບາດແດ່ ເກີນກວ່າ ໑ ບາດແດ່

ທີ່ຊື່ວ່າ ພຣະຣາຊາທັງຫຼາຍ ໄດ້ແກ່ ພຣະເຈົ້າແຜ່ນດິນ ເຈົ້າຜູ້ປົກຄອງປະເທດ ທ່ານຜູ້ປົກຄອງມົນທົນ ທ່ານຜູ້ປົກຄອງໝູ່ບ້ານທີ່ຢູ່ໃນລະຫວ່າງ ທ່ານຜູ້ຕັດສິນຄະດີ ມະຫາອຳມາດ ຫຼື ເຈົ້າໜ້າທີ່ທີ່ມີອຳນາດສັ່ງປະຫານ ແລະ ຈອງຈຳໄດ້ ທ່ານເຫຼົ່ານີ້ຊື່ວ່າ ພຣະຣາຊາທັງຫຼາຍ

ທີ່ຊື່ວ່າ ໂຈນ ໄດ້ແກ່ ຜູ້ທີ່ລັກຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ມີລາຄາ ໕ ມາສົກແດ່ ເກີນກວ່າ ໕ ມາສົກແດ່ ໂດຍສ່ວນແຫ່ງຈິດຄິດຈະລັກ ນີ້ຊື່ວ່າ ໂຈນ

ຄຳວ່າ ປະຫານແດ່ ໄດ້ແກ່ ປະຫານດ້ວຍມືແດ່ ດ້ວຍຕີນແດ່ ດ້ວຍແສ້ແດ່ ດ້ວຍຫວາຍແດ່ ດ້ວຍກະບອງແດ່ ດ້ວຍການຕັດແດ່

ຄຳວ່າ ຈອງຈຳແດ່ ໄດ້ແກ່ ຈອງຈຳດ້ວຍເຄື່ອງຈອງຈຳ ຄື ເຊືອກແດ່ ຂື່ຄາແດ່ ໂສ້ແດ່ ດ້ວຍການກັກຂັງໃນຄຸກແດ່ ກັກບໍລິເວນໃນເມືອງແດ່ ໃນໝູ່ບ້ານແດ່ ໃນເຂດແດ່ ໃຫ້ຄົນຄວບຄຸມແດ່

ຄຳວ່າ ເນຣະເທດແດ່ ໄດ້ແກ່ ຂັບໄລ່ອອກໄປຈາກໝູ່ບ້ານແດ່ ຈາກເຂດແດ່ ຈາກເມືອງແດ່ ຈາກຊົນນະບົດແດ່ ຈາກປະເທດແດ່

ຄຳວ່າ ເຈົ້າເປັນໂຈນ ເຈົ້າເປັນຄົນພານ ເຈົ້າເປັນຄົນຫຼົງ ເຈົ້າເປັນຂະໂມຍ ນີ້ເປັນຄຳບໍຣິພາດ

ທີ່ຊື່ວ່າ ເຊັ່ນນັ້ນ ຄື ໑ ບາດແດ່ ຄວນແກ່ ໑ ບາດແດ່ ເກີນກວ່າ ໑ ບາດແດ່

ຄຳວ່າ ຜູ້ຖືເອົາ ໄດ້ແກ່ ຜູ້ຕູ່ ຊິງ ສໍ້ ເຄື່ອນໄຫວອິລິຍາບົດ ເຮັດໃຫ້ຊັບເຄື້ອນທີ່ໃຫ້ລ່ວງເຂດທີ່ໝາຍ

ຄຳວ່າ ແມ່ນພິກຂຸນີ້ ພຣະຜູ້ມີພຣະພາກເຈົ້າຕັດຫຼຸບຄຽງພິກຂຸອົງກ່ອນ

ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກຂຸຖືເອົາຊັບທີ່ເຈົ້າຂອງບໍ່ໄດ້ໃຫ້ ໑ ບາດແດ່ ຄວນແກ່ ໑ ບາດແດ່ ເກີນກວ່າ ໑ ບາດແດ່ ໂດຍສ່ວນແຫ່ງຈິດຄິດຈະລັກ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ປຽບເໝືອນໃບໄມ້ຫຼ່ຽວເຫຼືອງລຸດຈາກຂວັ້ນແລ້ວ ບໍ່ອາດເປັນຂອງຂຽວສົດໄດ້ອີກຕໍ່ໄປໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າ ສັງວາດ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າ ສັງວາດ ສັງວາດນັ້ນບໍ່ມີກັບພິກຂຸອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ບົດພາຊະນີ

## ມາຕິກາ

[໖໓] ຊັບທີ່ຢູ່ໃນແຜ່ນດິນ ຊັບທີ່ຢູ່ເທິງບົກ ຊັບທີ່ຢູ່ໃນອາກາດ ຊັບທີ່ຢູ່ໃນທີ່ແຈ້ງ ຊັບທີ່ຢູ່ໃນນ້ຳ ຊັບທີ່ຢູ່ໃນເຮືອ ຊັບທີ່ຢູ່ໃນຍານ ຊັບ ທີ່ນຳຕິດຕົວໄປໄດ້ ຊັບທີ່ຢູ່ໃນສວນ ຊັບທີ່ຢູ່ໃນວັດ ຊັບທີ່ຢູ່ໃນນາ ຊັບທີ່ຢູ່ໃນພື້ນທີ່ ຊັບທີ່ຢູ່ໃນໝູ່ບ້ານ ຊັບທີ່ຢູ່ໃນປ່າ ນ້ຳ ໄມ້ຖູແຂ້ວ ຕົ້ນໄມ້ເຈົ້າປ່າ ຊັບທີ່ມີຜູ້ນຳໄປ ຊັບທີ່ເຂົາຝາກໄວ້ ດ່ານພາສີ ສັດມີຊີວິດ ສັດບໍ່ມີຕີນ ສັດ ໒ ຕີນ ສັດ ໔ ຕີນ ສັດມີຕີນຫຼາຍ ພິກຂຸຜູ້ສັ່ງ ພິກຂຸຜູ້ຮັບຂອງຝາກ ການຊັກຊວນກັນໄປລັກ ການນັດໝາຍ ການເຮັດນິມິດ

## ຊັບທີ່ຢູ່ໃນແຜ່ນດິນ

[໖໔] ທີ່ຊື່ວ່າ ຊັບທີ່ຢູ່ໃນແຜ່ນດິນ ໄດ້ແກ່ ຊັບທີ່ຝັງປົກໄວ້ໃນແຜ່ນດິນ ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນແຜ່ນດິນ ແລ້ວຫາເພື່ອນໄປນຳ ຫາຈົກ ຫາກະຕ່າ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຕັດໄມ້ ຫຼື ເຄືອເຂົາທີ່ຂຶ້ນຢູ່ທີ່ນັ້ນ ຕ້ອງອາບັດທຸກກົດ ຂຸດ ຫຼື ຄຸ້ຍດິນ ຕ້ອງອາບັດທຸກກົດ ຈັບຕ້ອງໝໍ້ຊັບ ຕ້ອງອາບັດ ທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື້ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຢ່ອນພາຊະນະຂອງຕົນລົງໄປຈັບຕ້ອງຊັບມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ຊັບເຂົ້າໄປຢູ່ໃນພາຊະນະຂອງຕົນ ຫຼື ດຶງໃຫ້ຂາດຈາກກັນຂຶ້ນມາໜຶ່ງກຳມື ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຈັບຕ້ອງຊັບທີ່ເຂົາຮ້ອຍດ້ວຍດ້າຍ ສັງວານ ສ້ອຍຄໍ ເຂັມຂັດ ຜ້າສາດົກ ຜ້າໂພກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ຈັບປາຍຍົກຂຶ້ນ ຕ້ອງອາ

ບັດຖຸນລັດໄຈ ດຶງຕູດອອກໄປ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ພົ້ນປາກໝໍ້ແມ່ນພຽງປາຍຜົມ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ດື່ມເນີຍໄສ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ດ້ວຍການດື່ມຄັ້ງດຽວ ຕ້ອງອາບັດປາຣາຊິກ ທຳລາຍ ເຮັດໃຫ້ເພືອດ ເຜົາ ຖິ້ມ ຫຼື ເຮັດໃຫ້ບໍລິໂພກບໍ່ໄດ້ ຕ້ອງອາບັດທຸກກົດ

## ຊັບທີ່ຢູ່ເທິງບົກ

[໘໕] ທີ່ຊື່ວ່າ ຊັບທີ່ຢູ່ເທິງບົກ ໄດ້ແກ່ ຊັບທີ່ເຂົາວາງໄວ້ເທິງພື້ນດິນ ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ເທິງບົກ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນອາກາດ

[໘໖] ທີ່ຊື່ວ່າ ຊັບທີ່ຢູ່ໃນອາກາດ ໄດ້ແກ່ ຊັບທີ່ຢູ່ເທິງອາກາດ ຄື ນົກຍູງ ນົກຄັບແຄ ນົກກະທາ ນົກກະຈາບ ຜ້າສາດົກ ຜ້າໂພກ ຫຼື ເງິນທອງທີ່ຂາດລຸດປິວໄປ ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນອາກາດ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຢຸດການໄປຂອງຊັບ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນທີ່ແຈ້ງ

[໘໗] ທີ່ຊື່ວ່າ ຊັບທີ່ຢູ່ໃນທີ່ແຈ້ງ ໄດ້ແກ່ ຊັບທີ່ແຂວນໄວ້ໃນທີ່ແຈ້ງ ເຊັ່ນຊັບທີ່ແຂວນໄວ້ເທິງຕຽງ ຫຼື ຕັ່ງ ຫ້ອຍໄວ້ເທິງຮາວຈີວອນ ສາຍຮຽກ ທີ່ເດືອຍຝາ ທີ່ເຄື່ອງແຂວນງາຊ້າງ ຫຼື ທີ່ຕົ້ນໄມ້ ໂດຍທີ່ສຸດແມ່ນເທິງຕີນບາດ ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນທີ່ແຈ້ງ ຫາເພື່ອນໄປນຳຫຼືໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນນ້ຳ

[໘໘] ທີ່ຊື່ວ່າ ຊັບທີ່ຢູ່ໃນນ້ຳ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນນ້ຳ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນນ້ຳ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ດຳລົງ ຫຼື ຜຸດຂຶ້ນໃນນ້ຳ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຈັບຕ້ອງດອກອຸບົນ ດອກປະທຸມ ດອກບຸນທະຣິກ ເຫງົ້າບົວ ປາ ຫຼື ເຕົ່າ ທີ່ເກີດໃນນ້ຳນັ້ນ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນເຮືອ

[໙໙] ທີ່ຊື່ວ່າ ເຮືອ ໄດ້ແກ່ ພາຫະນະສຳລັບໃຊ້ຂ້າມນ້ຳ

ທີ່ຊື່ວ່າ ຊັບທີ່ຢູ່ໃນເຮືອ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນເຮືອ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນເຮືອ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດຄິດຈະລັກເຮືອ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ແກ້ເຄື່ອງຜູກ ຕ້ອງອາບັດທຸກກົດ ແກ້ເຄື່ອງຜູກແລ້ວຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຮືອລອຍທວນນ້ຳ ລອຍຕາມນ້ຳ ຫຼື ລອຍໄປຂວາງລຳນ້ຳ ໃຫ້ເຄື່ອນໄປແມ່ນພຽງປາຍຜົມ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນຍານ

[໑໐໐] ທີ່ຊື່ວ່າ ຍານ ໄດ້ແກ່ ວໍ ລົດ ກວຽນ ຄານຫາມ

ທີ່ຊື່ວ່າ ຊັບທີ່ຢູ່ໃນຍານ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນຍານ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນຍານ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດຄິດຈະລັກຍານ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ນຳຕິດຕົວໄປໄດ້

[໑໐໑] ທີ່ຊື່ວ່າ ຊັບທີ່ນຳຕິດຕົວໄປໄດ້ ໄດ້ແກ່ ຊັບທີ່ຍົກໄປ ແບກໄປ ກົ້ງໄປ ຫີ້ວໄປ

ພິກຂຸມີໄຖຍະຈິດ ຈັບຕ້ອງຊັບທີ່ຢູ່ເທິງຫົວ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ລຸດຊັບລົງມາທີ່ບ່າ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຈັບຕ້ອງຊັບທີ່ຢູ່ລະດັບບ່າ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ລຸດຊັບລົງມາເຖິງລະດັບແອວ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຈັບຕ້ອງຊັບເຊິ່ງຢູ່ທີ່ແອວ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ໃຊ້ມືຖືໄປ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ວາງຊັບໃນມືລົງເທິງພື້ນ ຕ້ອງອາບັດປາຣາຊິກ ຖືເອົາຈາກພື້ນໄປ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນສວນ

[໑໐໘] ທີ່ຊື່ວ່າ ສວນ ໄດ້ແກ່ ສວນໄມ້ດອກ ສວນຕົ້ນໄມ້ໝາກ

ທີ່ຊື່ວ່າ ຊັບທີ່ຢູ່ໃນສວນ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນສວນໂດຍຖານະ ໔ ຄື ຝັງຢູ່ໃນແຜ່ນດິນ ຕັ້ງຢູ່ເທິງພື້ນດິນ ລອຍຢູ່ໃນອາກາດ ແຂວນຢູ່ໃນທີ່ແຈ້ງ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນສວນ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຈັບຕ້ອງຮາກ ເປືອກ ໃບ ດອກ ຫຼື ໝາກໄມ້ໃນສວນນັ້ນ ມີລາຄາ ໕ ມາ ສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕູ່ເອົາທີ່ສວນ ຕ້ອງອາບັດທຸກກົດ ເຮັດໃຫ້ເຈົ້າຂອງເກີດຄວາມສົງໄສ ຕ້ອງອາບັດຖຸນລັດໄຈ ຫາກເຈົ້າຂອງຖອນໃຈວ່າ ຈະບໍ່ເປັນຂອງເຮົາ ຕ້ອງອາບັດປາຣາຊິກ

ພິກຂຸເມື່ອດຳເນີນຄະດີຊະນະຄວາມເຈົ້າຂອງ ຕ້ອງອາບັດປາຣາຊິກ ເມື່ອດຳເນີນຄະດີພ່າຍແພ້ຄວາມ ຕ້ອງອາບັດຖຸນລັດໄຈ

## ຊັບທີ່ຢູ່ໃນວັດ

[໑໐໙] ທີ່ຊື່ວ່າ ຊັບທີ່ຢູ່ໃນວັດ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນວັດໂດຍຖານະ ໔ ຄື ຝັງຢູ່ໃນແຜ່ນດິນ ຕັ້ງຢູ່ເທິງພື້ນດິນ ລອຍຢູ່ໃນອາກາດ ແຂວນຢູ່ໃນທີ່ແຈ້ງ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນວັດ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕູ່ເອົາທີ່ວັດ ຕ້ອງອາບັດທຸກກົດ ເຮັດໃຫ້ເຈົ້າຂອງເກີດຄວາມສົງໄສ ຕ້ອງອາບັດຖຸນລັດໄຈ ຫາກເຈົ້າຂອງຖອນໃຈວ່າ ຈະບໍ່ເປັນຂອງເຮົາ ຕ້ອງອາບັດປາຣາຊິກ

ພິກຂຸເມື່ອດຳເນີນຄະດີ ຊະນະຄວາມເຈົ້າຂອງ ຕ້ອງອາບັດປາຣາຊິກ ເມື່ອດຳເນີນຄະດີພ່າຍແພ້ຄວາມ ຕ້ອງອາບັດຖຸນລັດໄຈ

## ຊັບທີ່ຢູ່ໃນນາ

[໑໐໔] ທີ່ຊື່ວ່າ ນາ ໄດ້ແກ່ ທີ່ເຊິ່ງມີບຸບພັນຊາດ ຫຼື ອະປະຣັນຊາດເກີດ

ທີ່ຊື່ວ່າ ຊັບທີ່ຢູ່ໃນນາ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນນາໂດຍຖານະ ໔ ຄື ຝັງຢູ່ໃນແຜ່ນດິນ ຕັ້ງຢູ່ເທິງພື້ນດິນ ລອຍຢູ່ໃນອາກາດ ແຂວນຢູ່ໃນທີ່ແຈ້ງ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນນາ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດຈັບຕ້ອງບຸບພັນຊາດ ຫຼື ອະປະຣັນຊາດຊາດທີ່ເກີດໃນນານັ້ນ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕູ່ເອົາທີ່ນາ ຕ້ອງອາບັດທຸກກົດ ເຮັດໃຫ້ເຈົ້າຂອງເກີດຄວາມສົງໄສ ຕ້ອງອາບັດຖຸນລັດໄຈ ຫາກເຈົ້າຂອງຖອນໃຈວ່າ ຈະບໍ່ເປັນຂອງເຮົາ ຕ້ອງອາບັດປາຣາຊິກ

ພິກຂຸເມື່ອດຳເນີນຄະດີ ຊະນະຄວາມເຈົ້າຂອງ ຕ້ອງອາບັດປາຣາຊິກ ເມື່ອດຳເນີນຄະດີພ່າຍແພ້ຄວາມ ຕ້ອງອາບັດຖຸນລັດໄຈ

ພິກຂຸປັກຫຼັກ ເນັ່ງເຊືອກ ລ້ອມຮົ້ວ ຫຼື ຖົມຄັນນາໃຫ້ລຸກລ້ຳທີ່ນາ ຕ້ອງອາບັດທຸກກົດ ເມື່ອຄວາມພະຍາຍາມລຸກລ້ຳທີ່ນາອີກຄັ້ງດຽວຈະສຳເລັດ ຕ້ອງອາບັດຖຸນລັດໄຈ ເມື່ອຄວາມພະຍາຍາມຄັ້ງສຸດທ້າຍສຳເລັດ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນພື້ນທີ່

[໑໐໕] ທີ່ຊື່ວ່າ ພື້ນທີ່ ໄດ້ແກ່ ພື້ນທີ່ສວນ ພື້ນທີ່ວັດ

ທີ່ຊື່ວ່າ ຊັບທີ່ຢູ່ໃນພື້ນທີ່ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນພື້ນທີ່ ໂດຍຖານະ ໔ ຄື ຝັງຢູ່ໃນແຜ່ນດິນ ຕັ້ງຢູ່ເທິງພື້ນດິນ ລອຍຢູ່ໃນອາກາດ ແຂວນຢູ່ໃນທີ່ແຈ້ງ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນພື້ນທີ່ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕູ່ເອົາພື້ນທີ່ ຕ້ອງອາບັດທຸກກົດ ເຮັດໃຫ້ເຈົ້າຂອງເກີດຄວາມສົງໄສ ຕ້ອງອາບັດຖຸນລັດໄຈ ຫາກເຈົ້າຂອງຖອນໃຈວ່າ ຈະບໍ່ເປັນຂອງເຮົາ ຕ້ອງອາບັດປາຣາຊິກ

ພິກຂຸເມື່ອດຳເນີນຄະດີ ຊະນະຄວາມເຈົ້າຂອງ ຕ້ອງອາບັດປາຣາຊິກ ເມື່ອດຳເນີນຄະດີພ່າຍແພ້ຄວາມ ຕ້ອງອາບັດຖຸນລັດໄຈ

ພິກຂຸປັກຫຼັກ ເບັ່ງເຊືອກ ລ້ອມຮົ້ວ ຫຼື ຖົມຄັນນາໃຫ້ລຸກລ້ຳພື້ນທີ່ ຕ້ອງອາບັດທຸກກົດ ເມື່ອຄວາມພະຍາຍາມລຸກລ້ຳພື້ນທີ່ອີກຄັ້ງດຽວຈະສຳເລັດ ຕ້ອງອາບັດຖຸນລັດໄຈ ເມື່ອຄວາມພະຍາຍາມຄັ້ງສຸດທ້າຍສຳເລັດ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນໝູ່ບ້ານ

[໑໐໖] ທີ່ຊື່ວ່າ ຊັບທີ່ຢູ່ໃນໝູ່ບ້ານ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນໝູ່ບ້ານໂດຍຖານະ ໔ ຄື ຝັງຢູ່ໃນແຜ່ນດິນ ຕັ້ງຢູ່ເທິງພື້ນດິນ ລອຍຢູ່ໃນອາກາດ ແຂວນຢູ່ໃນທີ່ແຈ້ງ

ພິກຂຸມີໄຖຍະຈິດ ຈິດຄິດຈະລັກຊັບທີ່ເກັບໄວ້ໃນໝູ່ບ້ານ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເຫັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ຢູ່ໃນປ່າ

[໑໐໗] ທີ່ຊື່ວ່າ ປ່າ ໄດ້ແກ່ ປ່າທີ່ມະນຸດຄອບຄອງ

ທີ່ຊື່ວ່າ ຊັບທີ່ຢູ່ໃນປ່າ ໄດ້ແກ່ ຊັບທີ່ເຂົາເກັບໄວ້ໃນປ່າ ໂດຍຖານະ ໔ ຄື ຝັງຢູ່ໃນແຜ່ນດິນ ຕັ້ງຢູ່ເທິງພື້ນດິນ ລອຍຢູ່ໃນອາກາດ ແຂວນຢູ່ໃນທີ່ແຈ້ງ

ພິກຂຸມີໄຖຍະຈິດຄິດຈະລັກຊັບທີ່ຢູ່ໃນປ່າ ຫາເພື່ອນໄປນຳ ຫຼື ໄປແຕ່ຜູ້ດຽວ ຕ້ອງອາບັດທຸກກົດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເຫັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຈັບຕ້ອງໄມ້ ເຄືອເຂົາ ຫຍ້າທີ່ເກີດໃນປ່ານັ້ນ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເຫັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ນ້ຳ

[໑໐໘] ທີ່ຊື່ວ່າ ນ້ຳ ໄດ້ແກ່ ນ້ຳທີ່ຢູ່ໃນພາຊະນະ ຂັງຢູ່ໃນສະໂບກຂະຣະນີ ຫຼືໃນນຳສ້າງ

ພິກຂຸມີໄຖຍະຈິດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເຫັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸມີໄຖຍະຈິດ ຍ່ອນພາຊະນະຂອງຕົນລົງໄປຈັບຕ້ອງນ້ຳ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ນ້ຳໄຫຼເຂົ້າໄປໃນພາຊະນະຂອງຕົນ ຕ້ອງອາບັດປາຣາຊິກ

ພິກຂຸທຳລາຍຄັນນາ ຕ້ອງອາບັດທຸກກົດ ທຳລາຍຄັນນາເຮັດນ້ຳໃຫ້ໄຫຼອອກໄປ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດປາຣາຊິກ ເຮັດໃຫ້ນ້ຳໄຫຼອອກໄປມີລາຄາເກີນກວ່າ ໑ ມາສົກ ຫຼື ໜ້ອຍກວ່າ ໕ ມາສົກ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ນ້ຳໄຫຼອອກໄປ ມີລາຄາ ໑ ມາສົກຫຼືຍ່ອນກວ່າ ໑ ມາສົກ ຕ້ອງອາບັດທຸກກົດ

## ໄມ້ຖູແຂ້ວ

[໑໐໙] ທີ່ຊື່ວ່າ ໄມ້ຖູແຂ້ວ ໄດ້ແກ່ ໄມ້ຖູແຂ້ວທີ່ຕັດແລ້ວ ຫຼື ຍັງບໍ່ໄດ້ຕັດ

ພິກຂຸມີໄຖຍະຈິດ ຈັບຕ້ອງໄມ້ຖູແຂ້ວ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຕົ້ນໄມ້ເຈົ້າປ່າ

[໑໑໐] ທີ່ຊື່ວ່າ ຕົ້ນໄມ້ເຈົ້າປ່າ ໄດ້ແກ່ ຕົ້ນໄມ້ທີ່ຄົນທັງຫຼາຍຄອບຄອງ ເປັນຕົ້ນໄມ້ນຳໄປໃຊ້ສອຍໄດ້

ພິກຂຸມີໄຖຍະຈິດ ຕັດ ຕ້ອງອາບັດທຸກກົດ ທຸກ ໆ ຄັ້ງທີ່ຟັນຕົ້ນໄມ້ ເມື່ອຟັນອີກຄັ້ງດຽວຕົ້ນໄມ້ຈະຂາດ ຕ້ອງອາບັດຖຸນລັດໄຈ ເມື່ອຟັນຕົ້ນໄມ້ຂາດ ຕ້ອງອາບັດປາຣາຊິກ

## ຊັບທີ່ມີຜູ້ນຳໄປ

[໑໑໑] ທີ່ຊື່ວ່າ ຊັບທີ່ມີຜູ້ນຳໄປ ໄດ້ແກ່ ສິ່ງຂອງທີ່ຜູ້ອື່ນນຳໄປ

ພິກຂຸມີໄຖຍະຈິດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸຄິດວ່າ ຈະນຳຊັບພ້ອມກັບຜູ້ຖືຊັບຍ່າງໄປ ໃຫ້ກ້າວຂາທີ ໑ ໄປ ຕ້ອງອາບັດຖຸນລັດໄຈ ໃຫ້ກ້າວຂາທີ ໒ ໄປ ຕ້ອງອາບັດປາຣາຊິກ

ພິກຂຸເຮັດໃຫ້ຊັບຕົກດ້ວຍຄິດວ່າ ຈະເກັບຊັບທີ່ຕົກ ຕ້ອງອາບັດທຸກກົດ ມີໄຖຍະຈິດ ຈັບຕ້ອງຊັບທີ່ຕົກ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕິງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ຊັບທີ່ເຂົາຝາກໄວ້

[໑໑໒] ທີ່ຊື່ວ່າ ຊັບທີ່ເຂົາຝາກໄວ້ ໄດ້ແກ່ ສິ່ງຂອງທີ່ຜູ້ອື່ນໃຫ້ເກັບໄວ້

ພິກຂຸຮັບຝາກຂອງ ເມື່ອເຈົ້າຂອງທວງວ່າ "ຈົ່ງຄືນຊັບໃຫ້ແກ່ຂ້າພະເຈົ້າ" ປະຕິເສດວ່າ "ອາດຕະມາບໍ່ໄດ້ຮັບໄວ້" ຕ້ອງອາບັດທຸກກົດ ເຮັດໃຫ້ເຈົ້າຂອງເກີດຄວາມສົງໄສ ຕ້ອງອາບັດຖຸນລັດໄຈ ຫາກເຈົ້າຂອງຖອນໃຈວ່າ ຈະບໍ່ຄືນໃຫ້ເຮົາ ຕ້ອງອາບັດປາຣາຊິກ

ພິກຂຸເມື່ອດໍາເນີນຄະດີ ຊະນະຄວາມເຈົ້າຂອງ ຕ້ອງອາບັດປາຣາຊິກ ເມື່ອດໍາເນີນຄະດີພ່າຍແພ້ຄວາມ ຕ້ອງອາບັດຖຸນລັດໄຈ

## ດ່ານພາສີ

[໑໑໓] ທີ່ຊື່ວ່າ ດ່ານພາສີ ໄດ້ແກ່ ທີ່ເຊິ່ງພຣະເຈົ້າແຜ່ນດິນຊົງກໍານົດເຂດ ທີ່ພູເຂົາຂາດກໍດີ ທ່ານໍ້າກໍດີ ປະຕູເຂົ້າໝູ່ບ້ານກໍດີ ດ້ວຍຮັບສັ່ງວ່າ "ຈົ່ງເກັບພາສີຜູ້ຜ່ານເຂົ້າໄປທີ່ນັ້ນ"

ພິກຂຸເຂົ້າໄປທີ່ດ່ານພາສີນັ້ນ ມີໄຖຍະຈິດຈັບຕ້ອງຊັບທີ່ຄວນເສຍພາສີ ມີລາຄາ ໕ ມາສົກ ຫຼືເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ບາດກ້າວທີ ໑ ຜ່ານດ່ານພາສີໄປ ຕ້ອງອາບັດຖຸນລັດໄຈ ບາດກ້າວທີ ໒ ຜ່ານດ່ານພາສີໄປ ຕ້ອງອາບັດປາຣາຊິກ

ພິກຂຸຢືນຢູ່ພາຍໃນດ່ານພາສີ ໂຍນຊັບໃຫ້ຕົກນອກດ່ານພາສີ ຕ້ອງອາບັດປາຣາຊິກ ພິກຂຸຫຼີກດ່ານພາສີ ຕ້ອງອາບັດທຸກກົດ

## ສັດມີຊີວິດ

[໑໑໔] ທີ່ຊື່ວ່າ ສັດມີຊີວິດ ໝາຍເອົາມະນຸດທີ່ມີຊີວິດ

ພິກຂຸມີໄຖຍະຈິດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸຄິດຈະພາຍ່າງໄປ ໃຫ້ກ້າວຂາທີ ໑ ໄປ ຕ້ອງອາບັດຖຸນລັດໄຈ ໃຫ້ກ້າວຂາທີ ໒ ໄປ ຕ້ອງອາບັດປາຣາຊິກ

## ສັດບໍ່ມີຕີນ

ທີ່ຊື່ວ່າ ສັດບໍ່ມີຕີນ ໄດ້ແກ່ ງູ ປາ

ພິກຂຸມີໄຖຍະຈິດ ຈັບຕ້ອງສັດບໍ່ມີຕີນ ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ສັດ ໒ ຕີນ

[໑໑໕] ທີ່ຊື່ວ່າ ສັດ ໒ ຕີນ ໄດ້ແກ່ ມະນຸດ ນົກ

ພິກຂຸມີໄຖຍະຈິດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸຄິດຈະພາຍ່າງໄປ ໃຫ້ກ້າວຂາທີ ໑ ໄປ ຕ້ອງອາບັດຖຸນລັດໄຈ ໃຫ້ກ້າວຂາທີ ໒ ໄປ ຕ້ອງອາບັດປາຣາຊິກ

## ສັດ ໔ ຕີນ

[໑໑໖] ທີ່ຊື່ວ່າ ສັດ ໔ ຕີນ ໄດ້ແກ່ ຊ້າງ ມ້າ ອູດ ງົວ ລາ ສັດລ້ຽງ

ພິກຂຸມີໄຖຍະຈິດ ຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸຄິດຈະພາຍ່າງໄປ ໃຫ້ກ້າວຂາທີ ໑ ໄປ ຕ້ອງອາບັດຖຸນລັດໄຈ ໃຫ້ກ້າວຂາທີ ໒ ໄປ ຕ້ອງອາບັດຖຸນລັດໄຈ ໃຫ້ກ້າວຂາທີ ໓ ໄປ ຕ້ອງອາບັດຖຸນລັດໄຈ ໃຫ້ກ້າວຂາທີ ໔ ໄປ ຕ້ອງອາບັດປາຣາຊິກ

## ສັດມີຕີນຫຼາຍ

[໑໑໗] ທີ່ຊື່ວ່າ ສັດມີຕີນຫຼາຍ ໄດ້ແກ່ ສັດຈຳພວກແມງງອດ ຂີ້ເຂັບ ບົ້ງຂົນ

ພິກຂຸມີໄຖຍະຈິດ ຈັບຕ້ອງສັດມີຕີນຫຼາຍ ທີ່ມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

ພິກຂຸຄິດຈະພາຍ່າງໄປ ໃຫ້ກ້າວຂາກ້າວໄປ ຕ້ອງອາບັດຖຸນລັດໄຈ ທຸກ ໆ ບາດກ້າວ ໃຫ້ກ້າວຂາຫຼັງສຸດກ້າວໄປ ຕ້ອງອາບັດປາຣາຊິກ

## ພິກຂຸຜູ້ສັ່ງ

[໑໑໘] ທີ່ຊື່ວ່າ ພິກຂຸຜູ້ສັ່ງ ໄດ້ແກ່ ພິກຂຸສັ່ງກຳນົດໃຫ້ລັກຊັບວ່າ ທ່ານຈົ່ງລັກຊັບອັນນີ້ ຕ້ອງອາບັດທຸກກົດ ພິກຂຸຮັບຄຳສັ່ງລັກຊັບນັ້ນມາໄດ້ ຕ້ອງອາບັດປາຣາຊິກ ທັງ ໒ ອົງ

## ພິກຂຸຜູ້ຮັບຂອງຝາກ

ທີ່ຊື່ວ່າ ພິກຂຸຜູ້ຮັບຂອງຝາກ ໄດ້ແກ່ ພິກຂຸຜູ້ຮັກສາຊັບທີ່ເຂົານຳມາຝາກໄວ້ ພິກຂຸມີໄຖຍະຈິດ ຈັບຕ້ອງຊັບມີລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

## ການຊັກຊວນກັນໄປລັກ

ທີ່ຊື່ວ່າ ການຊັກຊວນກັນໄປລັກ ໄດ້ແກ່ ພິກຂຸຫຼາຍອົງຊັກຊວນກັນແລ້ວ ອົງໜຶ່ງ ລັກຊັບມາໄດ້ ຕ້ອງອາບັດປາຣາຊິກທຸກອົງ

## ການນັດໝາຍ

[໑໗໙] ທີ່ຊື່ວ່າ ການນັດໝາຍ ອະທິບາຍວ່າ ພິກຂຸເຮັດການນັດໝາຍວ່າ ຈົ່ງລັກຊັບຕາມເວລານັດໝາຍນັ້ນ ຄື ໃນເວລາກ່ອນສັນອາຫານ ຫຼື ໃນເວລາຫຼັງອາຫານ ໃນເວລາກາງຄືນ ຫຼື ໃນເວລາກາງເວັນ ຕ້ອງອາບັດທຸກກົດ ພິກຂຸຜູ້ລັກ ລັກຊັບໄດ້ມາຕາມເວລານັດໝາຍນັ້ນ ຕ້ອງອາບັດປາຣາຊິກທັງ ໔ ອົງ ພິກຂຸຜູ້ລັກ ລັກຊັບໄດ້ມາ ກ່ອນ ຫຼື ຫຼັງເວລານັດໝາຍນັ້ນ ພິກຂຸຜູ້ນັດໝາຍບໍ່ຕ້ອງອາບັດ ພິກຂຸຜູ້ລັກ ຕ້ອງອາບັດປາຣາຊິກ

## ການເຮັດນິມິດ

[໑໘໐] ທີ່ຊື່ວ່າ ການເຮັດນິມິດ ອະທິບາຍວ່າ ພິກຂຸເຮັດນິມິດວ່າ ເຮົາຈັກກະພິບຕາ ຍັກຄິ້ວ ຫຼື ງຶກຫົວ ທ່ານຈົ່ງລັກຊັບນັ້ນ ຕາມທີ່ເຮົາເຮັດນິມິດນັ້ນ ຕ້ອງອາບັດທຸກກົດ ພິກຂຸຜູ້ລັກລັກຊັບໄດ້ມາຕາມການເຮັດນິມິດນັ້ນ ຕ້ອງອາບັດປາຣາຊິກທັງ ໔ ອົງ ພິກຂຸຜູ້ລັກ ລັກຊັບມາໄດ້ກ່ອນ ຫຼື ຫຼັງການເຮັດນິມິດນັ້ນ ພິກຂຸຜູ້ເຮັດນິມິດບໍ່ຕ້ອງອາບັດ ພິກຂຸຜູ້ລັກ ຕ້ອງອາບັດປາຣາຊິກ

## ການສັ່ງ

[໑໘໑] ພິກຂຸສັ່ງພິກຂຸວ່າ “ທ່ານຈົ່ງລັກຊັບນີ້ມາ” ຕ້ອງອາບັດທຸກກົດ ພິກຂຸ ຜູ້ຮັບຄຳສັ່ງສຳຄັນຊັບນັ້ນວ່າເປັນຊັບນັ້ນ ລັກຊັບນັ້ນມາໄດ້ ຕ້ອງອາບັດປາຣາຊິກ ທັງ ໔ ອົງ

ພິກຂຸສັ່ງພິກຂຸວ່າ “ທ່ານຈົ່ງລັກຊັບນີ້ມາ” ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນຊັບນັ້ນວ່າເປັນຊັບນັ້ນ ລັກຊັບອື່ນມາ ພິກຂຸຜູ້ສັ່ງບໍ່ຕ້ອງອາບັດ ພິກຂຸຜູ້ລັກຕ້ອງອາບັດປາຣາຊິກ

ພິກຂຸສັ່ງພິກຂຸວ່າ “ທ່ານຈົ່ງລັກຊັບນີ້ມາ” ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນຊັບນັ້ນວ່າເປັນຊັບອື່ນ ແຕ່ລັກຊັບນັ້ນມາໄດ້ ຕ້ອງອາບັດປາຣາຊິກທັງ ໔ ອົງ

ພິກຂຸສັ່ງພິກຂຸວ່າ “ທ່ານຈົ່ງລັກຊັບນີ້ມາ” ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນຊັບນັ້ນວ່າເປັນຊັບອື່ນ ລັກຊັບອື່ນມາໄດ້ ພິກຂຸຜູ້ສັ່ງບໍ່ຕ້ອງອາບັດ ພິກຂຸຜູ້ລັກຕ້ອງອາບັດປາຣາຊິກ

ພິກຂຸ (ຜູ້ເປັນອາຈານ) ສັ່ງພິກຂຸ (ຊື່ວ່າພຸດທະຣັກຂິຕະ) ວ່າ “ທ່ານຈົ່ງບອກພິກຂຸຊື່ (ທຳມະຣັກຂິຕະ) ນີ້ວ່າ ຈົ່ງບອກພິກຂຸຊື່ (ສັງຄະຣັກຂິຕະ) ນີ້ວ່າ “ຈົ່ງລັກຊັບນີ້ມາ” ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງໄປບອກພິກຂຸອີກອົງໜຶ່ງ ຕ້ອງອາບັດທຸກກົດ ພິກຂຸຜູ້ລັກຮັບຄຳສັ່ງ

ພິກຂຸຜູ້ສັ່ງຄັ້ງທຳອິດຕ້ອງອາບັດຖຸນລັດໄຈ ພິກຂຸຜູ້ລັກ ລັກຊັບນັ້ນມາໄດ້ ຕ້ອງອາບັດປາຣາຊິກທຸກອົງ

ພິກຂຸ (ຜູ້ເປັນອາຈານ) ສັ່ງພິກຂຸ (ຊື່ວ່າພຸດທະຣັກຂິຕະ) ວ່າ "ທ່ານຈົ່ງບອກພິກຂຸຊື່ (ທຳມະຣັກຂິຕະ) ນີ້ວ່າ ຈົ່ງບອກພິກຂຸຊື່ (ສັງຄະຣັກຂິຕະ) ນີ້ວ່າ "ຈົ່ງລັກຊັບນີ້ມາ" ດັ່ງນີ້ ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງໄປບອກພິກຂຸອົງອື່ນ ຕ້ອງອາບັດທຸກກົດ ພິກຂຸຜູ້ລັກຮັບຄຳສັ່ງຕ້ອງອາບັດທຸກກົດ ພິກຂຸຜູ້ລັກ ລັກຊັບນັ້ນມາໄດ້ ພິກຂຸຜູ້ສັ່ງຄັ້ງທຳອິດ ບໍ່ຕ້ອງອາບັດ ພິກຂຸຜູ້ສັ່ງຕໍ່ ແລະ ພິກຂຸຜູ້ລັກ ຕ້ອງອາບັດປາຣາຊິກ

ພິກຂຸສັ່ງພິກຂຸວ່າ "ຈົ່ງລັກຊັບນີ້ມາ" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງໄປແລ້ວກັບມາບອກວ່າ "ຂ້ານ້ອຍບໍ່ສາມາດລັກຊັບນັ້ນໄດ້" ຜູ້ສັ່ງຈຶ່ງສັ່ງອີກວ່າ "ຈົ່ງລັກຊັບນັ້ນໃນເວລາທີ່ທ່ານສາມາດຈະລັກໄດ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງລັກຊັບນັ້ນມາໄດ້ ຕ້ອງອາບັດປາຣາຊິກທັງ ໒ ອົງ

ພິກຂຸສັ່ງພິກຂຸວ່າ "ຈົ່ງລັກຊັບນີ້ມາ" ຕ້ອງອາບັດທຸກກົດ ທ່ານສັ່ງແລ້ວເກີດຄວາມເດືອດຮ້ອນໃຈ ແຕ່ບໍ່ໄດ້ກ່າວໃຫ້ຜູ້ຮັບຄຳສັ່ງໄດ້ຍິນວ່າ "ຢ່າລັກ" ພິກຂຸຜູ້ຮັບຄຳສັ່ງລັກຊັບ ນັ້ນມາໄດ້ຕ້ອງອາບັດປາຣາຊິກທັງ ໒ ອົງ

ພິກຂຸສັ່ງພິກຂຸວ່າ "ຈົ່ງລັກຊັບນີ້ມາ" ຕ້ອງອາບັດທຸກກົດ ທ່ານສັ່ງແລ້ວເກີດຄວາມເດືອດຮ້ອນໃຈ ຈຶ່ງກ່າວໃຫ້ໄດ້ຍິນວ່າ "ຢ່າລັກ" ແຕ່ພິກຂຸຜູ້ຮັບຄຳສັ່ງກ່າວວ່າ "ທ່ານສັ່ງເຮົາແລ້ວ" ລັກຊັບນັ້ນມາໄດ້ ພິກຂຸຜູ້ສັ່ງບໍ່ຕ້ອງອາບັດ ພິກຂຸຜູ້ລັກ ຕ້ອງອາບັດປາຣາຊິກ

ພິກຂຸສັ່ງພິກຂຸວ່າ "ຈົ່ງລັກຊັບນີ້ມາ" ຕ້ອງອາບັດທຸກກົດ ທ່ານສັ່ງແລ້ວເກີດຄວາມເດືອດຮ້ອນໃຈ ຈຶ່ງກ່າວໃຫ້ຜູ້ຮັບຄຳສັ່ງໄດ້ຍິນວ່າ "ຢ່າລັກ" ພິກຂຸຜູ້ຮັບຄຳສັ່ງນັ້ນຮັບວ່າ "ດີແລ້ວ" ຈຶ່ງງົດເວັ້ນ ບໍ່ຕ້ອງອາບັດທັງ ໒ ອົງ

## ອົງແຫ່ງປາຣາຊິກສິກຂາບົດທີ ໒

[໑໒໒] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດປາຣາຊິກດ້ວຍອາການ ໕ ຢ່າງ ຄື

໑. ຊັບມີຜູ້ຄອບຄອງ
໒. ສຳຄັນວ່າເປັນຊັບທີ່ມີຜູ້ຄອບຄອງ
໓. ຊັບມີຄ່າຫຼາຍ ລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ
໔. ມີໄຖຍະຈິດຜາກົດ
໕. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

[໑໒໓] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດຖຸນລັດໄຈດ້ວຍອາການ ໕ ຢ່າງ ຄື

໑. ຊັບມີຜູ້ຄອບຄອງ
໒. ສຳຄັນວ່າເປັນຊັບທີ່ມີຜູ້ຄອບຄອງ
໓. ຊັບມີຄ່າໜ້ອຍ ລາຄາເກີນ ໑ ມາສົກ ຫຼື ໜ້ອຍກວ່າ ໕ ມາສົກ
໔. ມີໄຖຍະຈິດຜາກົດ
໕. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດຖຸນລັດໄຈ

[໑໒໔] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດທຸກກົດ ດ້ວຍອາການ ໕ ຢ່າງ ຄື

໑. ຊັບມີຜູ້ຄອບຄອງ
໒. ສຳຄັນວ່າເປັນຊັບທີ່ມີຜູ້ຄອບຄອງ
໓. ຊັບມີຄ່າໜ້ອຍ ລາຄາ ໑ ມາສົກ ຫຼື ໜ້ອຍກວ່າ ໑ ມາສົກ
໔. ມີໄຖຍະຈິດຜາກົດ
໕. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດທຸກກົດ

[໑໒໕] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດປາຣາຊິກດ້ວຍອາການ ໖ ຢ່າງ ຄື

໑. ສຳຄັນວ່າບໍ່ແມ່ນຂອງຂອງຕົນ
໒. ບໍ່ແມ່ນຖືເອົາດ້ວຍວິສາສະ
໓. ບໍ່ແມ່ນເປັນຂອງຂໍຢືມ
໔. ຊັບມີຄ່າຫຼາຍ ລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ
໕. ມີໄຖຍະຈິດຜາກົດ
໖. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດຖຸນລັດໄຈ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດປາຣາຊິກ

[໑໒໖] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດຖຸນລັດໄຈດ້ວຍອາການ ໖ ຢ່າງ ຄື

໑. ສຳຄັນວ່າບໍ່ແມ່ນຂອງຂອງຕົນ
໒. ບໍ່ແມ່ນຖືເອົາດ້ວຍວິສາສະ
໓. ບໍ່ແມ່ນເປັນຂອງຂໍຢືມ
໔. ຊັບມີຄ່າໜ້ອຍ ລາຄາເກີນ ໑ ມາສົກ ຫຼື ໜ້ອຍກວ່າ ໕ ມາສົກ
໕. ມີໄຖຍະຈິດຜາກົດ

໖. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື້ອນທີ່ ຕ້ອງອາບັດຖຸນລັດໄຈ

[໑໘໗] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດທຸກກົດ ດ້ວຍອາການ ໖ ຢ່າງ ຄື

໑. ສໍາຄັນວ່າບໍ່ແມ່ນຂອງຂອງຕົນ
໒. ບໍ່ແມ່ນຖືເອົາດ້ວຍວິສາສະ
໓. ບໍ່ແມ່ນເປັນຂອງຂໍຢືມ
໔. ຊັບມີຄ່າໜ້ອຍ ລາຄາ ໑ ມາສົກ ຫຼື ໜ້ອຍກວ່າ ໑ ມາສົກ
໕. ມີໄຖຍະຈິດຜາກົດ
໖. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື້ອນທີ່ ຕ້ອງອາບັດທຸກກົດ

[໑໘໘] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດທຸກກົດ ດ້ວຍອາການ ໕ ຢ່າງ ຄື

໑. ບໍ່ແມ່ນຊັບທີ່ມີຜູ້ຄອບຄອງ
໒. ສໍາຄັນວ່າເປັນຊັບທີ່ມີຜູ້ຄອບຄອງ
໓. ຊັບມີຄ່າຫຼາຍ ລາຄາ ໕ ມາສົກ ຫຼື ເກີນກວ່າ ໕ ມາສົກ
໔. ມີໄຖຍະຈິດຜາກົດ
໕. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື້ອນທີ່ ຕ້ອງອາບັດທຸກກົດ

[໑໘໙] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດທຸກກົດ ດ້ວຍອາການ ໕ ຢ່າງ ຄື

໑. ບໍ່ແມ່ນຊັບທີ່ມີຜູ້ຄອບຄອງ
໒. ສໍາຄັນວ່າເປັນຊັບທີ່ມີຜູ້ຄອບຄອງ
໓. ຊັບມີຄ່າໜ້ອຍ ລາຄາເກີນ ໑ ມາສົກ ຫຼື ໜ້ອຍກວ່າ ໕ ມາສົກ
໔. ມີໄຖຍະຈິດຜາກົດ
໕. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື້ອນທີ່ ຕ້ອງອາບັດທຸກກົດ

[໑໙໐] ພິກຂຸຜູ້ຖືເອົາຂອງທີ່ເຂົາບໍ່ໄດ້ໃຫ້ ຕ້ອງອາບັດທຸກກົດ ດ້ວຍອາການ ໕ ຢ່າງ ຄື

໑. ບໍ່ແມ່ນຊັບທີ່ມີຜູ້ຄອບຄອງ
໒. ສໍາຄັນວ່າເປັນຊັບທີ່ມີຜູ້ຄອບຄອງ

໓. ຊັບມີຄ່າໜ້ອຍ ລາຄາ ໑ ມາສົກ ຫຼື ໜ້ອຍກວ່າ ໑ ມາສົກ
໔. ມີໄຖຍະຈິດຜາກົດ
໕. ພິກຂຸຈັບຕ້ອງ ຕ້ອງອາບັດທຸກກົດ ເຮັດໃຫ້ເໜັງຕີງ ຕ້ອງອາບັດທຸກກົດ ເຮັດໃຫ້ເຄື່ອນທີ່ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໓໑] ໑. ພິກຂຸສຳຄັນວ່າເປັນຂອງຂອງຕົນ
໒. ພິກຂຸຖືເອົາດ້ວຍວິສາສະ
໓. ພິກຂຸຖືເອົາເປັນຂອງຂໍຢືມ
໔. ພິກຂຸຖືເອົາຊັບທີ່ເຜດຄອບຄອງ
໕. ພິກຂຸຖືເອົາຊັບທີ່ສັດເດຍຣັດສານຄອບຄອງ
໖. ພິກຂຸສຳຄັນວ່າເປັນຂອງບັງສຸກຸນ
໗. ພິກຂຸວິກົນຈະລິດ
໘. ພິກຂຸມີຈິດຟຸ້ງຊ່ານ
໙. ພິກຂຸກະສັບກະສ່າຍຍ້ອນເວທະນາ
໑໐. ພິກຂຸຕົ້ນບັນຍັດ

**ປະຖົມພານະວານ ໃນອະທິນນາທານສິກຂາບົດ ຈົບ**

## ຄາຖາລວມວິນີຕະວັດຖຸ

## ເລື້ອງທີ່ຊົງວິນິດໄສແລ້ວ

| | | | |
|---|---|---|---|
| ເລື້ອງຊ່າງຍ້ອມ | ໕ ເລື້ອງ | ເລື້ອງຜ້າປູຕຽງ | ໔ ເລື້ອງ |
| ເລື້ອງກາງຄືນ | ໕ ເລື້ອງ | ເລື້ອງຊັບທີ່ພິກຂຸນຳໄປແຕ່ຜູ້ດຽວ | ໑໑ ເລື້ອງ |
| ເລື້ອງຕອບຕາມຄຳຖາມນຳ | ໕ ເລື້ອງ | ເລື້ອງລົມ | ໒ ເລື້ອງ |
| ເລື້ອງສົບທີ່ຍັງສົດ | ໑ ເລື້ອງ | ເລື້ອງສັບປ່ຽນສະລາກ | ໑ ເລື້ອງ |
| ເລື້ອງເຮືອນໄຟ | ໑ ເລື້ອງ | ເລື້ອງຊີ້ນເດນສັດ | ໕ ເລື້ອງ |
| ເລື້ອງບໍ່ມີມູນ | ໕ ເລື້ອງ | ໃນສະໄໝອຶດຢາກ ມີ | ໕ ເລື້ອງ ຄື |
| ເລື້ອງເຂົ້າສຸກ | ໑ ເລື້ອງ | ເລື້ອງຊີ້ນ | ໑ ເລື້ອງ |

| | | | |
|---|---|---|---|
| ເລື້ອງເຂົ້າໜົມ | ໑ ເລື້ອງ | ເລື້ອງນ້ຳຕານກ້ອນ | ໑ ເລື້ອງ |
| ເລື້ອງເຂົ້າປຽກ | ໑ ເລື້ອງ | ເລື້ອງບໍຣິຂານ | ໔ ເລື້ອງ |
| ເລື້ອງຖົງ | ໑ ເລື້ອງ | ເລື້ອງຟູກ | ໑ ເລື້ອງ |
| ເລື້ອງຈີວອນ | ໑ ເລື້ອງ | ເລື້ອງບໍ່ອອກໄປ | ໑ ເລື້ອງ |
| ເລື້ອງຖືວິສາສະສັນຂອງຫຍ້ຳ | ໑ ເລື້ອງ | ເລື້ອງສຳຄັນວ່າເປັນຂອງຂອງຕົນ | ໒ ເລື້ອງ |
| ເລື້ອງບໍ່ໄດ້ລັກ | ໗ ເລື້ອງ | ເລື້ອງລັກ | ໗ ເລື້ອງ |
| ເລື້ອງລັກຂອງສົງ | ໗ ເລື້ອງ | ເລື້ອງລັກດອກໄມ້ | ໒ ເລື້ອງ |
| ເລື້ອງເວົ້າຕາມຄຳບອກ | ໙ ເລື້ອງ | ເລື້ອງນຳແກ້ວມະນີຜ່ານດ່ານພາສີ | ໙ ເລື້ອງ |
| ເລື້ອງປ່ອຍໝູ | ໒ ເລື້ອງ | ເລື້ອງປ່ອຍເນື້ອ | ໒ ເລື້ອງ |
| ເລື້ອງປ່ອຍປາ | ໒ ເລື້ອງ | ເລື້ອງກິ້ງຊັບໃນຍານ | ໑ ເລື້ອງ |
| ເລື້ອງຕ່ອນຊີ້ນ | ໒ ເລື້ອງ | ເລື້ອງໄມ້ | ໒ ເລື້ອງ |
| ເລື້ອງຜ້າບັງສຸກຸນ | ໑ ເລື້ອງ | ເລື້ອງຂ້າມນ້ຳ | ໒ ເລື້ອງ |
| ເລື້ອງສັນເທື່ອລະໜ້ອຍ | ໑ ເລື້ອງ | ເລື້ອງຊັກຊວນກັນໄປລັກ | ໒ ເລື້ອງ |
| ເລື້ອງກຳມີທີ່ນະຄອນສາວັດຖີ | ໔ ເລື້ອງ | ເລື້ອງຊີ້ນເງື່ອນ | ໒ ເລື້ອງ |
| ເລື້ອງຫຍ້າ | ໒ ເລື້ອງ | ເລື້ອງໃຫ້ແບ່ງຂອງສົງ | ໗ ເລື້ອງ |
| ເລື້ອງບໍ່ແມ່ນເຈົ້າຂອງ | ໗ ເລື້ອງ | ເລື້ອງຢືມໄມ້ຂອງສົງ | ໑ ເລື້ອງ |
| ເລື້ອງລັກນ້ຳຂອງສົງ | ໑ ເລື້ອງ | ເລື້ອງລັກດິນຂອງສົງ | ໑ ເລື້ອງ |
| ເລື້ອງລັກຫຍ້າຂອງສົງ | ໒ ເລື້ອງ | ເລື້ອງລັກເສນາສະນະຂອງສົງ | ໗ ເລື້ອງ |
| ເລື້ອງຂອງມີເຈົ້າຂອງບໍ່ຄວນນຳໄປໃຊ້ | ໑ ເລື້ອງ | | |
| ເລື້ອງຂອງມີເຈົ້າຂອງຄວນຂໍຢືມ | ໑ ເລື້ອງ | | |
| ເລື້ອງພິກຂຸນີຊາວນະຄອນຈຳປາ | ໑ ເລື້ອງ | | |
| ເລື້ອງພິກຂຸນີຊາວນະຄອນຣາຊະຄຶ | ໑ ເລື້ອງ | | |
| ເລື້ອງພຣະອັດຊຸກະຊາວນະຄອນເວສາລີ | ໑ ເລື້ອງ | | |
| ເລື້ອງເດັກອ່ອນຊາວນະຄອນພາຣານະສີ | ໑ ເລື້ອງ | | |
| ເລື້ອງພິກຂຸຊາວນະຄອນໂກສຳພີ | ໑ ເລື້ອງ | | |
| ເລື້ອງສັດທີວິຫາຣິກຂອງພຣະທັນທິກະນະຄອນສາຄະລະ | ໑ ເລື້ອງ | | |

## ວິນີຕະວັດຖຸ
## ເລື້ອງຊ່າງຍ້ອມ ໕ ເລື້ອງ

[໑໓໔] ສະໄໝນັ້ນ ພວກພິກຂຸສັບພັກຄີໄປທີ່ລານຕາກຜ້າຂອງຊ່າງຍ້ອມ ໄດ້ລັກຫໍ່ຜ້າຂອງຊ່າງຍ້ອມ ແລ້ວເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑)

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ລານຕາກຜ້າຂອງຊ່າງຍ້ອມ ພົບຜ້າມີລາຄາຫຼາຍ ເກີດໄຖຍະຈິດຂຶ້ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ພຽງແຕ່ຄິດ ບໍ່ຕ້ອງອາບັດ" (ເລື້ອງທີ ໒)

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ລານຕາກຜ້າຂອງຊ່າງຍ້ອມ ພົບຜ້າມີລາຄາຫຼາຍ ມີໄຖຍະຈິດຈັບຜ້າຜືນນັ້ນ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໓)

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ລານຕາກຜ້າຂອງຊ່າງຍ້ອມ ພົບຜ້າມີລາຄາຫຼາຍ ມີໄຖຍະຈິດ ເຮັດໃຫ້ຜ້າເໜັງຕິງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໔)

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ລານຕາກຜ້າຂອງຊ່າງຍ້ອມ ພົບຜ້າມີລາຄາຫຼາຍ ມີໄຖຍະຈິດເຮັດໃຫ້ຜ້າເຄື່ອນທີ່ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງ ທີ ໕)

## ເລື້ອງຜ້າປູຽງ ໔ ເລື້ອງ

[໑໓໓] ສະໄໝນັ້ນ ພິກຂຸຜູ້ທ່ຽວບິນທະບາດເປັນວັດອົງໜຶ່ງພົບຜ້າປູຽງມີລາຄາຫຼາຍເກີດໄຖຍະຈິດຂຶ້ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ພຽງແຕ່ຄິດບໍ່ຕ້ອງອາບັດ" (ເລື້ອງທີ ໖)

ສະໄໝນັ້ນ ພິກຂຸຜູ້ທ່ຽວບິນທະບາດເປັນວັດອົງໜຶ່ງພົບຜ້າປູຫຼຽງມີລາຄາຫຼາຍ ມີໄຖຍະຈິດຈັບຕ້ອງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໗)

ສະໄໝນັ້ນ ພິກຂຸອົງໜຶ່ງພົບຜ້າປູຫຼຽງມີລາຄາຫຼາຍ ມີໄຖຍະຈິດ ເຮັດໃຫ້ຜ້າເໜັງຕີງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘)

ສະໄໝນັ້ນ ພິກຂຸອົງໜຶ່ງພົບຜ້າປູຫຼຽງມີລາຄາຫຼາຍ ມີໄຖຍະຈິດ ເຮັດໃຫ້ຜ້າເຄື້ອນທີ່ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙)

## ເລື້ອງກາງຄືນ ໕ ເລື້ອງ

[໑໓໔] ສະໄໝນັ້ນ ພິກຂຸອົງໜຶ່ງພົບສິ່ງຂອງຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນສິ່ງຂອງນັ້ນວ່າເປັນສິ່ງຂອງນັ້ນ ຈຶ່ງໄດ້ລັກຂອງນັ້ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐)

ສະໄໝນັ້ນ ພິກຂຸອົງໜຶ່ງພົບສິ່ງຂອງຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ ດ້ວຍຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນສິ່ງຂອງນັ້ນວ່າເປັນສິ່ງຂອງນັ້ນ ແຕ່ໄດ້ລັກສິ່ງຂອງອື່ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑)

ສະໄໝນັ້ນ ພິກຂຸອົງໜຶ່ງພົບສິ່ງຂອງຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ ດ້ວຍຕັ້ງໃຈວ່າຈະລັກຕອນກາງຄືນ ທ່ານສຳຄັນສິ່ງຂອງນັ້ນວ່າເປັນສິ່ງຂອງອື່ນ ແຕ່ໄດ້ລັກສິ່ງຂອງນັ້ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໒)

ສະໄໝນັ້ນ ພິກຂຸອົງໜຶ່ງພົບສິ່ງຂອງຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍ ຕັ້ງໃຈວ່າຈະລັກຕອນກາງຄືນ ທ່ານສຳຄັນສິ່ງຂອງນັ້ນວ່າເປັນສິ່ງຂອງອື່ນ ໄດ້ລັກສິ່ງຂອງອື່ນມາ ແລ້ວ

ເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ"(ເລື້ອງທີ ໑໓ )

ສະໄໝນັ້ນ ພິກຂຸອົງໜຶ່ງພົບສິ່ງຂອງຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍ ຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນສິ່ງຂອງນັ້ນວ່າເປັນສິ່ງຂອງນັ້ນ ແຕ່ໄດ້ລັກສິ່ງຂອງຂອງຕົນເອງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໔)

## ເລື້ອງຊັບທີ່ພິກຂຸນຳໄປແຕ່ຜູ້ດຽວ ໑໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ຈັບຕ້ອງສິ່ງຂອງທີ່ຢູ່ເທິງຫົວຕົນເອງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໕)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ເຮັດສິ່ງຂອງທີ່ຢູ່ເທິງຫົວຕົນເອງໃຫ້ເໜັງຕີງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໖)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ລຸດສິ່ງຂອງທີ່ຢູ່ເທິງຫົວຕົນເອງລົງມາທີ່ບ່າ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໗)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ຈັບຕ້ອງສິ່ງຂອງທີ່ຢູ່ເທິງບ່າ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໘)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ເຮັດສິ່ງຂອງທີ່ຢູ່ທີ່ບ່າຕົນເອງໃຫ້ເໜັງຕີງ ແລ້ວເກີດຄວາມຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໙)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ລຸດສິ່ງຂອງທີ່ຢູ່ທີ່ບ່າລົງມາເຖິງລະດັບແອວ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໐)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ຈັບຕ້ອງສິ່ງຂອງທີ່ຢູ່ທີ່ແອວ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໘໑)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ເຮັດສິ່ງຂອງເຊິ່ງຢູ່ທີ່ແອວໃຫ້ ເໜັງຕີງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໒)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ເອົາມືຈັບສິ່ງຂອງເຊິ່ງຢູ່ທີ່ແອວຫິ້ວໄປ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໓)

ສະໄໝນັ້ນ ພິກຂຸອົງໜຶ່ງນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດ ເອົາສິ່ງຂອງທີ່ມືວາງລົງພື້ນ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໔)

ສະໄໝນັ້ນ ພິກຂຸອົງໜຶ່ງ ນຳສິ່ງຂອງຂອງຜູ້ອື່ນໄປ ມີໄຖຍະຈິດຈັບສິ່ງຂອງຂຶ້ນຈາກພື້ນດິນ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໕)

## ເລື້ອງຕອບຕາມຄຳຖາມນຳ ໕ ເລື້ອງ

[໑໓໕] ສະໄໝນັ້ນ ພິກຂຸອົງໜຶ່ງຕາກຈີວອນໄວ້ກາງແຈ້ງແລ້ວເຂົ້າໄປວິຫານ ພິກຂຸອີກອົງໜຶ່ງເກັບຈີວອນນັ້ນດ້ວຍຫວັງວ່າ ຈະບໍ່ໃຫ້ຈີວອນຫາຍ ພິກຂຸເຈົ້າຂອງຈີວອນອອກມາ ຖາມ

ພິກຂຸອົງທີ່ເກັບໄປນັ້ນວ່າ "ທ່ານ ຈີວອນຂອງເຮົາໃຜລັກໄປ" ພິກຂຸອົງນັ້ນຕອບວ່າ "ເຮົາລັກໄປ" ພິກຂຸເຈົ້າຂອງຈີວອນຈັບເອົາພິກຂຸອົງທີ່ນຳຈີວອນໄປກ່າວວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງທີ່ນຳຈີວອນໄປເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງຕອບໄປຕາມຄຳຖາມນຳ ຂ້ານ້ອຍ" "ພິກຂຸ ບໍ່ຕ້ອງອາບັດ ຍ້ອນຕອບຕາມຄຳຖາມນຳ" (ເລື້ອງທີ ໘໖)

ສະໄໝນັ້ນ ພິກຂຸອົງໜຶ່ງພາດຈີວອນໄວ້ເທິງຕັ່ງແລ້ວເຂົ້າໄປວິຫານ ພິກຂຸອີກອົງໜຶ່ງເກັບຈີວອນນັ້ນດ້ວຍຫວັງວ່າຈະບໍ່ໃຫ້ຈີວອນຫາຍ ພິກຂຸເຈົ້າຂອງຈີວອນອອກມາ ຖາມພິກຂຸອົງທີ່ເກັບໄປນັ້ນວ່າ "ທ່ານ ຈີວອນຂອງເຮົາໃຜລັກໄປ" ພິກຂຸອົງນັ້ນຕອບວ່າ "ເຮົາລັກໄປ" ພິກຂຸເຈົ້າຂອງຈີວອນຈັບເອົາພິກຂຸອົງທີ່ນຳຈີວອນໄປກ່າວວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງທີ່ນຳຈີວອນໄປເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງຕອບໄປຕາມຄຳຖາມນຳ ຂ້ານ້ອຍ" "ພິກຂຸ ບໍ່ຕ້ອງອາບັດ ຍ້ອນຕອບຕາມຄຳຖາມນຳ" (ເລື້ອງທີ ໘໗)

ສະໄໝນັ້ນ ພິກຂຸອົງໜຶ່ງພາດຜ້າປູນັ່ງໄວ້ເທິງຕັ່ງ ພິກຂຸອີກອົງໜຶ່ງເກັບຜ້າປູນັ່ງນັ້ນດ້ວຍຫວັງວ່າ ຈະບໍ່ໃຫ້ຜ້າປູນັ່ງຫາຍ ພິກຂຸເຈົ້າຂອງຜ້າປູນັ່ງອອກມາ ຖາມພິກຂຸອົງທີ່ເກັບໄປນັ້ນວ່າ "ທ່ານ ຜ້າປູນັ່ງຂອງເຮົາ ໃຜລັກໄປ" ພິກຂຸອົງນັ້ນຕອບວ່າ "ເຮົາລັກໄປ" ພິກຂຸເຈົ້າຂອງຜ້າປູນັ່ງຈັບເອົາພິກຂຸອົງທີ່ນຳຜ້າປູນັ່ງໄປກ່າວວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງທີ່ນຳຜ້າປູນັ່ງໄປເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງຕອບໄປຕາມຄຳຖາມນຳ ຂ້ານ້ອຍ" "ພິກຂຸ ບໍ່ຕ້ອງອາບັດ ຍ້ອນຕອບຕາມຄຳຖາມນຳ" (ເລື້ອງທີ ໘໘)

ສະໄໝນັ້ນ ພິກຂຸອົງໜຶ່ງວາງບາດໄວ້ໃຕ້ຕັ່ງແລ້ວເຂົ້າໄປວິຫານ ພິກຂຸອີກອົງໜຶ່ງໄດ້ເກັບບາດນັ້ນດ້ວຍຫວັງວ່າ ຈະບໍ່ໃຫ້ບາດຫາຍ ພິກຂຸເຈົ້າຂອງບາດອອກມາຖາມພິກຂຸອົງທີ່ເກັບໄປນັ້ນວ່າ "ທ່ານ ບາດຂອງເຮົາ ໃຜລັກໄປ" ພິກຂຸອົງນັ້ນຕອບວ່າ "ເຮົາລັກໄປ" ພິກຂຸເຈົ້າຂອງບາດຈັບເອົາພິກຂຸອົງທີ່ນຳບາດໄປກ່າວວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງທີ່ນຳບາດໄປເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງຕອບໄປຕາມຄຳຖາມນຳ ຂ້ານ້ອຍ" "ພິກຂຸ ບໍ່ຕ້ອງອາບັດ ຍ້ອນຕອບຕາມຄຳຖາມນຳ" (ເລື້ອງທີ ໘໙)

ສະໄໝນັ້ນ ພິກຂຸນີອົງໜຶ່ງຕາກຈີວອນໄວ້ທີ່ຮົ້ວແລ້ວເຂົ້າໄປສູ່ວິຫານ ພິກຂຸນີອີກອົງໜຶ່ງເກັບຈີວອນນັ້ນດ້ວຍຫວັງວ່າ ຈະບໍ່ໃຫ້ຈີວອນຫາຍ ພິກຂຸນີເຈົ້າຂອງຈີວອນອອກມາຖາມພິກຂຸນີ

ອົງທີ່ເກັບໄປນັ້ນວ່າ "ທ່ານ ຈີວອນຂອງເຮົາໃຜລັກໄປ" ພິກຂຸນີອົງນັ້ນຕອບວ່າ "ເຮົາລັກໄປ" ພິກຂຸນີເຈົ້າຂອງຈີວອນຈັບເອົາພິກຂຸນີອົງທີ່ນຳຈີວອນໄປກ່າວວ່າ "ທ່ານບໍ່ເປັນພຣະ" ພິກຂຸນີອົງທີ່ນຳຈີວອນໄປເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງບອກເລື້ອງນີ້ແກ່ພິກຂຸນີທັງຫຼາຍ ພິກຂຸນີທັງຫຼາຍຈຶ່ງບອກແກ່ພິກຂຸທັງຫຼາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຕອບຕາມຄຳຖາມນຳ" (ເລື້ອງທີ ໕໐)

## ເລື້ອງລົມ ໔ ເລື້ອງ

[໑໕໖] ສະໄໝນັ້ນ ພິກຂຸອົງໜຶ່ງພົບຜ້າສາດົກຖືກລົມຫົວກຸດພັດມາ ຈຶ່ງເກັບໄວ້ດ້ວຍຕັ້ງໃຈຈະນຳຄືນເຈົ້າຂອງ ແຕ່ພວກເຈົ້າຂອງຜ້າກ່າວຫາທ່ານວ່າ "ທ່ານບໍ່ເປັນພຣະ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ມີໄຖຍະຈິດຂ້ານ້ອຍ" "ພິກຂຸ ບໍ່ມີໄຖຍະຈິດ ບໍ່ຕ້ອງອາບັດ" (ເລື້ອງທີ ໕໑)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ຖືເອົາຜ້າໂພກເຊິ່ງຖືກລົມຫົວກຸດພັດມາ ດ້ວຍຢ້ານວ່າເຈົ້າຂອງຜ້າຈະເຫັນສາກ່ອນ ພວກເຈົ້າຂອງຜ້າກ່າວຫາທ່ານວ່າ "ທ່ານບໍ່ເປັນພຣະ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີໄຖຍະຈິດ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໔)

## ເລື້ອງສົບທີ່ຍັງສົດ ໑ ເລື້ອງ

[໑໕໗] ສະໄໝນັ້ນ ພິກຂຸອົງໜຶ່ງໄປປ່າຊ້າ ຖືເອົາຜ້າບັງສຸກຸນທີ່ຊາກສົບຍັງສົດເຊິ່ງມີເຜດສິງຢູ່ໃນຮ່າງ ເຜດນັ້ນເວົ້າກັບພິກຂຸນັ້ນວ່າ "ຢ່າເອົາຜ້າຂອງເຮົາໄປ" ພິກຂຸບໍ່ໃສ່ໃຈຖືເອົາໄປ ທັນໃດນັ້ນ ຮ່າງນັ້ນລຸກຂຶ້ນຕິດຕາມພິກຂຸໄປ ພິກຂຸອົງນັ້ນເຂົ້າໄປວິຫານແລ້ວປິດປະຕູໄວ້ ຮ່າງນັ້ນໄດ້ລົ້ມລົງທີ່ປະຕູນັ້ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຖືເອົາຜ້າບັງສຸກຸນໃນຊາກສົບທີ່ຍັງສົດ ພິກຂຸໃດຖືເອົາ ຕ້ອງອາບັດທຸກກົດ" (ເລື້ອງທີ ໕໕)

## ເລື້ອງສັບປ່ຽນສະລາກ ໑ ເລື້ອງ

[໑໕໘] ສະໄໝນັ້ນ ເມື່ອພິກຂຸເຈົ້າໜ້າທີ່ກຳລັງແຈກຈີວອນແກ່ສົງ ພິກຂຸອົງໜຶ່ງ ມີໄຖຍະ

ຈິດໄດ້ສັບປ່ຽນສະລາກຮັບຈີວອນໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກ ແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໖໔)

## ເລື້ອງເຮືອນໄຟ ໑ ເລື້ອງ

[໑໖໙] ສະໄໝນັ້ນ ພຣະອານົນສຳຄັນວ່າຜ້າອັນຕະຣະວາສົກຂອງພິກຂຸອົງໜຶ່ງໃນເຮືອນໄຟເປັນຂອງຕົນຈຶ່ງນຸ່ງ ພິກຂຸອົງທີ່ເປັນເຈົ້າຂອງຜ້າອັນຕະຣະວາສົກກ່າວກັບທ່ານພຣະອານົນ ວ່າ "ເປັນຫຍັງທ່ານຈຶ່ງເອົາຜ້າອັນຕະຣາສົກຂອງເຮົາໄປນຸ່ງ" "ທ່ານ ເຮົາສຳຄັນວ່າເປັນຂອງເຮົາ" ພິກຂຸທັງ ຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸສຳຄັນວ່າເປັນຂອງຕົນ ບໍ່ຕ້ອງອາບັດ" (ເລື້ອງທີ ໖໕)

## ເລື້ອງຊີ້ນເງື່ອນສັດ ໕ ເລື້ອງ

[໑໔໐] ສະໄໝນັ້ນ ພິກຂຸຫຼາຍອົງລົງຈາກພູເຂົາຄິດຊະກູດ ພົບຊີ້ນທີ່ເປັນເງື່ອນຂອງຣາດຊະສີ ຈຶ່ງໃຊ້ໃຫ້ອະນຸປະສຳບັນເຮັດໃຫ້ສຸກແລ້ວສັນ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດ ປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງ ຕັດວ່າ "ພິກຂຸທັງຫຼາຍ ພິກຂຸສັນຊີ້ນເປັນເງື່ອນຣາດຊະສີ ບໍ່ຕ້ອງອາບັດ"(ເລື້ອງທີ ໖໖)

ສະໄໝນັ້ນ ພິກຂຸຫຼາຍອົງລົງຈາກພູເຂົາຄິດຊະກູດ ພົບຊີ້ນເປັນເງື່ອນເສືອໂຄ່ງ ຈຶ່ງໃຊ້ໃຫ້ອະນຸປະສຳບັນເຮັດໃຫ້ສຸກແລ້ວສັນ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງ ຕັດວ່າ "ພິກຂຸທັງຫຼາຍ ພິກຂຸສັນຊີ້ນເປັນເງື່ອນເສືອໂຄ່ງ ບໍ່ຕ້ອງອາບັດ" (ເລື້ອງທີ ໖໗)

ສະໄໝນັ້ນ ພິກຂຸຫຼາຍອົງລົງຈາກພູເຂົາຄິດຊະກູດ ພົບຊີ້ນເປັນເງື່ອນເສືອເຫຼືອງ ຈຶ່ງໃຊ້ໃຫ້ອະນຸປະສຳບັນເຮັດໃຫ້ສຸກແລ້ວສັນ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງ ຕັດວ່າ "ພິກຂຸທັງຫຼາຍ ພິກຂຸສັນຊີ້ນເປັນເງື່ອນເສືອເຫຼືອງ ບໍ່ຕ້ອງອາບັດ" (ເລື້ອງທີ ໖໘)

ສະໄໝນັ້ນ ພິກຂຸຫຼາຍອົງລົງຈາກພູເຂົາຄິດຊະກູດ ພົບຊີ້ນເປັນເງື່ອນໝາໄນ ຈຶ່ງໃຊ້ໃຫ້ອະນຸປະສຳບັນເຮັດໃຫ້ສຸກແລ້ວສັນ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸສັນຊີ້ນທີ່ເປັນເງື່ອນໝາໄນ ບໍ່ຕ້ອງອາບັດ" (ເລື້ອງທີ ໖໙)

ສະໄໝນັ້ນ ພິກຂຸຫຼາຍອົງລົງຈາກພູເຂົາຄິດຊະກູດ ພົບຊີ້ນເປັນເງື່ອນໝາປ່າ ຈຶ່ງໃຊ້ໃຫ້ອະນຸປະສໍາບັນເຮັດໃຫ້ສຸກແລ້ວສັນ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸສັນຊີ້ນທີ່ສັດເດຍຣັດສານຄອບຄອງ ບໍ່ຕ້ອງອາບັດ" (ເລື້ອງທີ ໘໐)

## ເລື້ອງບໍ່ມີມູນ ໕ ເລື້ອງ

[໑໘໑] ສະໄໝນັ້ນ ເມື່ອພິກຂຸເຈົ້າໜ້າທີ່ກໍາລັງແຈກອາຫານແກ່ສົງ ພິກຂຸອົງໜຶ່ງກ່າວຄໍາບໍ່ມີມູນວ່າ "ຈົ່ງໃຫ້ເພື່ອພິກຂຸອື່ນອີກສ່ວນໜຶ່ງ" ແລ້ວຮັບໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕີຍ້ອນກ່າວຕົວະທັງທີ່ຮູ້" (ເລື້ອງທີ ໘໑)

ສະໄໝນັ້ນ ເມື່ອພິກຂຸເຈົ້າໜ້າທີ່ກໍາລັງແຈກຂອງຫຍໍ້າແກ່ສົງ ພິກຂຸອົງໜຶ່ງກ່າວຄໍາບໍ່ມີມູນວ່າ "ຈົ່ງໃຫ້ເພື່ອພິກຂຸອື່ນອີກສ່ວນໜຶ່ງ" ແລ້ວຮັບໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕີ ຍ້ອນກ່າວຕົວະທັງທີ່ຮູ້" (ເລື້ອງທີ ໘໒)

ສະໄໝນັ້ນ ເມື່ອພິກຂຸເຈົ້າໜ້າທີ່ກໍາລັງແຈກເຂົ້າໜົມແກ່ສົງ ພິກຂຸອົງໜຶ່ງກ່າວຄໍາບໍ່ມີມູນວ່າ "ຈົ່ງໃຫ້ເພື່ອພິກຂຸອື່ນອີກສ່ວນໜຶ່ງ" ແລ້ວຮັບໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕີ ຍ້ອນກ່າວຕົວະທັງທີ່ຮູ້" (ເລື້ອງທີ ໘໓)

ສະໄໝນັ້ນ ເມື່ອພິກຂຸເຈົ້າໜ້າທີ່ກໍາລັງແຈກນໍ້າອ້ອຍແກ່ສົງ ພິກຂຸອົງໜຶ່ງກ່າວຄໍາບໍ່ມີມູນວ່າ "ຈົ່ງໃຫ້ເພື່ອພິກຂຸອື່ນອີກສ່ວນໜຶ່ງ" ແລ້ວຮັບໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາ ຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕີ ຍ້ອນກ່າວຕົວະທັງທີ່ຮູ້" (ເລື້ອງທີ ໘໔)

ສະໄໝນັ້ນ ເມື່ອພິກຂຸເຈົ້າໜ້າທີ່ກໍາລັງແຈກໝາກພັບແກ່ສົງ ພິກຂຸອົງໜຶ່ງກ່າວຄໍາບໍ່ມີມູນວ່າ "ຈົ່ງໃຫ້ເພື່ອພິກຂຸອື່ນອີກສ່ວນໜຶ່ງ" ແລ້ວຮັບໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດ

ວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕີ ຍ້ອນກ່າວຕົວະທັງທີ່ຮູ້" (ເລື້ອງທີ ໘໕)

## ໃນສະໄໝອຶດຢາກມີ ໕ ເລື້ອງ ຄື

## ເລື້ອງເຂົ້າສຸກ ໑ ເລື້ອງ

[໑໘໘] ສະໄໝນັ້ນ ເມື່ອເກີດອຶດຢາກ ພິກຂຸອົງໜຶ່ງເຂົ້າໄປຮ້ານຂາຍເຂົ້າສຸກ ມີໄຖຍະຈິດໄດ້ລັກເຂົ້າສຸກໄປເຕັມບາດ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງ ຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໖)

## ເລື້ອງຊີ້ນ ໑ ເລື້ອງ

ສະໄໝນັ້ນ ເມື່ອເກີດອຶດຢາກ ພິກຂຸອົງໜຶ່ງເຂົ້າໄປຮ້ານຂາຍຊີ້ນສຸກ ມີໄຖຍະຈິດໄດ້ລັກຊີ້ນໄປເຕັມບາດ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງ ໘໗)

## ເລື້ອງເຂົ້າໜົມ ໑ ເລື້ອງ

ສະໄໝນັ້ນ ເມື່ອເກີດອຶດຢາກ ພິກຂຸອົງໜຶ່ງເຂົ້າໄປຮ້ານຂາຍເຂົ້າໜົມ ມີໄຖຍະຈິດໄດ້ລັກເຂົ້າໜົມໄປເຕັມບາດ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໘ )

## ເລື້ອງນ້ຳຕານກ້ອນ ໑ ເລື້ອງ

ສະໄໝນັ້ນ ເມື່ອເກີດອຶດຢາກ ພິກຂຸອົງໜຶ່ງເຂົ້າໄປຮ້ານຂາຍນ້ຳຕານກ້ອນ ມີໄຖຍະຈິດໄດ້ລັກນ້ຳຕານກ້ອນ ໄປເຕັມບາດ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດ ປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໙ )

## ເລື້ອງເຂົ້າປຽກ ໑ ເລື້ອງ

ສະໄໝນັ້ນ ເມື່ອເກີດອຶດຢາກ ພິກຂຸອົງໜຶ່ງເຂົ້າໄປຮ້ານຂາຍເຂົ້າປຽກ ມີໄຖຍະຈິດໄດ້ລັກເຂົ້າປຽກໄປເຕັມບາດ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງ

ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໕໐ )

## ເລື້ອງບໍຣິຂານ ໕ ເລື້ອງ

[໑໔໓] ສະໄໝນັ້ນ ພິກຂຸອົງໜຶ່ງພົບເຄື່ອງໃຊ້ສອຍຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍຕັ້ງໃຈວ່າຈະລັກຕອນກາງຄືນ ທ່ານສຳຄັນເຄື່ອງໃຊ້ສອຍນັ້ນວ່າເປັນເຄື່ອງໃຊ້ສອຍນັ້ນ ຈຶ່ງໄດ້ລັກເຄື່ອງໃຊ້ສອຍນັ້ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໕໑)

ສະໄໝນັ້ນ ພິກຂຸອົງໜຶ່ງພົບເຄື່ອງໃຊ້ສອຍຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນເຄື່ອງໃຊ້ສອຍນັ້ນວ່າເປັນເຄື່ອງໃຊ້ສອຍນັ້ນ ແຕ່ໄດ້ລັກເຄື່ອງໃຊ້ສອຍອື່ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໕໒)

ສະໄໝນັ້ນ ພິກຂຸອົງໜຶ່ງພົບເຄື່ອງໃຊ້ສອຍຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນເຄື່ອງໃຊ້ສອຍນັ້ນວ່າເປັນເຄື່ອງໃຊ້ສອຍອື່ນ ແຕ່ໄດ້ລັກເຄື່ອງໃຊ້ສອຍນັ້ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໕໓)

ສະໄໝນັ້ນ ພິກຂຸອົງໜຶ່ງພົບເຄື່ອງໃຊ້ສອຍຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນເຄື່ອງໃຊ້ສອຍນັ້ນວ່າເປັນເຄື່ອງໃຊ້ສອຍອື່ນ ແຕ່ໄດ້ລັກເຄື່ອງໃຊ້ສອຍອື່ນມາ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໕໔)

ສະໄໝນັ້ນ ພິກຂຸອົງໜຶ່ງພົບເຄື່ອງໃຊ້ສອຍຕອນກາງເວັນ ໄດ້ເຮັດເຄື່ອງໝາຍໄວ້ດ້ວຍຕັ້ງໃຈວ່າ ຈະລັກຕອນກາງຄືນ ທ່ານສຳຄັນເຄື່ອງໃຊ້ສອຍນັ້ນວ່າເປັນເຄື່ອງໃຊ້ສອຍນັ້ນ ແຕ່ລັກເຄື່ອງໃຊ້ສອຍຂອງຕົນເອງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ” (ເລື້ອງທີ ໕໕)

## ເລື້ອງຖົງ ໑ ເລື້ອງ

[໑໘໔] ສະໄໝນັ້ນ ພິກຂຸອົງໜຶ່ງພົບຖົງວາງໄວ້ເທິງຕັ່ງ ຄິດວ່າຫາກຈັບໄປຈາກຕັ່ງ ຈະເປັນປາຣາຊິກ ຈຶ່ງຍົກເອົາໄປພ້ອມທັງຕັ່ງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໖)

## ເລື້ອງຟູກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດໄດ້ລັກຟູກຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໗)

## ເລື້ອງຈີວອນ ໑ ເລື້ອງ

[໑໘໕] ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດໄດ້ລັກຈີວອນທີ່ຣາວຈີວອນ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໘)

## ເລື້ອງບໍ່ອອກໄປ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງລັກຈີວອນໃນວິຫານ ຄິດວ່າຫາກຕົນອອກໄປຈາກວິຫານຈະເປັນປາຣາຊິກ ຈຶ່ງບໍ່ຍອມອອກໄປຈາກວິຫານ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ໂມຄະບຸຣຸດນັ້ນຈະອອກຈາກວິຫານ ຫຼື ບໍ່ອອກກໍຕາມ ກໍຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໙)

## ເລື້ອງຖືວິສາສະສັນຂອງຫຍ້ຳ ໑ ເລື້ອງ

[໑໘໖] ສະໄໝນັ້ນ ພິກຂຸ ໔ ອົງເປັນເພື່ອນກັນ ພິກຂຸອົງໜຶ່ງເຂົ້າໄປບິນທະບາດໃນໝູ່ບ້ານ ເມື່ອພິກຂຸເຈົ້າໜ້າທີ່ກຳລັງແຈກຂອງຂົບຫຍ້ຳແກ່ສົງ ພິກຂຸອົງທີ່ເປັນເພື່ອນຮັບ ເອົາສ່ວນແບ່ງຂອງເພື່ອນໄປແລ້ວຖືວິສາສະສັນສ່ວນແບ່ງຂອງພິກຂຸນັ້ນ ທ່ານຮູ້ເລື້ອງເຂົ້າຈຶ່ງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງຖືເອົາດ້ວຍວິສາສະ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດ ຍ້ອນຖືເອົາດ້ວຍວິສາສະ" (ເລື້ອງທີ ໖໐)

## ເລື່ອງສຳຄັນວ່າເປັນຂອງຂອງຕົນ ໔ ເລື່ອງ

[໑໔໗] ສະໄໝນັ້ນ ພິກຂຸຫຼາຍອົງກຳລັງຕັດຫຍິບຈີວອນ ເມື່ອພິກຂຸເຈົ້າໜ້າທີ່ກຳລັງແຈກຂອງຂົບຫຍ້ຳແກ່ສົງ ພິກຂຸທຸກອົງຕ່າງນຳສ່ວນແບ່ງຂອງຕົນໄປເກັບໄວ້ ພິກຂຸອົງໜຶ່ງສຳຄັນສ່ວນແບ່ງຂອງພິກຂຸອີກອົງໜຶ່ງວ່າເປັນສ່ວນແບ່ງຂອງຕົນຈຶ່ງສັບສາ ພິກຂຸເຈົ້າຂອງສ່ວນແບ່ງຮູ້ເລື່ອງເຂົ້າ ຈຶ່ງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງທີ່ຖືກກ່າວຫາເກີດຄວາມກັງວົນໃຈວ່າເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງສຳຄັນວ່າເປັນຂອງຂອງຕົນຂ້ານ້ອຍ" "ພິກຂຸ ທ່ານສຳຄັນວ່າເປັນຂອງຂອງຕົນ ບໍ່ຕ້ອງອາບັດ" (ເລື່ອງທີ ໖໑)

ສະໄໝນັ້ນ ພິກຂຸຫຼາຍອົງກຳລັງຕັດຫຍິບຈີວອນ ເມື່ອພິກຂຸເຈົ້າໜ້າທີ່ກຳລັງແຈກຂອງຂົບຫຍ້ຳແກ່ສົງ ພິກຂຸອົງໜຶ່ງເອົາບາດຂອງພິກຂຸອີກອົງໜຶ່ງນຳສ່ວນແບ່ງຂອງພິກຂຸອີກອົງໜຶ່ງມາເກັບໄວ້ ພິກຂຸເຈົ້າຂອງບາດສຳຄັນວ່າເປັນສ່ວນແບ່ງຂອງຕົນຈຶ່ງສັບສາ ພິກຂຸອົງທີ່ນຳບາດໄປຮູ້ເລື່ອງເຂົ້າ ຈຶ່ງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງທີ່ຖືກກ່າວຫາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານສຳຄັນວ່າເປັນຂອງຂອງຕົນ ບໍ່ຕ້ອງອາບັດ"(ເລື່ອງທີ ໖໔)

## ເລື່ອງບໍ່ໄດ້ລັກ ໗ ເລື່ອງ

[໑໔໘] ສະໄໝນັ້ນ ພວກລັກໝາກມ່ວງ ເຮັດໃຫ້ໝາກມ່ວງຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກມ່ວງຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສຳບັນເກັບໝາກມ່ວງຫໍ່ນັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື່ອງທີ ໖໓)

ສະໄໝນັ້ນ ພວກລັກໝາກຫວ້າ ເຮັດໃຫ້ຫວ້າຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ຫວ້າຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສຳບັນເກັບຫໍ່ໝາກຫວ້ານັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດ

ຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໖໔)

ສະໄໝນັ້ນ ພວກລັກໝາກມີ້ສຳປະລໍ ເຮັດໃຫ້ໝາກມີ້ປ່າຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກມີ້ປ່າ ຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສຳບັນເກັບຫໍ່ໝາກມີ້ປ່ານັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໖໕)

ສະໄໝນັ້ນ ພວກລັກໝາກມີ້ ເຮັດໃຫ້ໝາກມີ້ຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກມີ້ຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສຳບັນເກັບຫໍ່ໝາກມີ້ນັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໖໖)

ສະໄໝນັ້ນ ພວກລັກໝາກຕານສຸກ ເຮັດໃຫ້ໝາກຕານສຸກຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກຕານສຸກຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນຈຶ່ງໃຫ້ອະນຸປະສຳບັນເກັບຫໍ່ໝາກຕານສຸກນັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໖໗)

ສະໄໝນັ້ນ ພວກລັກອ້ອຍ ຕັດອ້ອຍແລ້ວມັດຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນມັດອ້ອຍຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສຳບັນເກັບມັດອ້ອຍນັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວ

ບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ຜ໗)

ສະໄໝນັ້ນ ພວກລັກໝາກພັບ ເຮັດໃຫ້ໝາກພັບຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກພັບຖິ້ມແລ້ວໜີໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສຳບັນເກັບຫໍ່ໝາກພັບນັ້ນໄປແລ້ວສັນ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງສຳຄັນວ່າເປັນຂອງບັງສຸກຸນຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ຜ໙)

## ເລື້ອງລັກ ໆ ເລື້ອງ

ສະໄໝນັ້ນ ພວກລັກໝາກມ່ວງ ເຮັດໃຫ້ໝາກມ່ວງຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກມ່ວງຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດ ຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງສັນໝາກມ່ວງ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໐)

ສະໄໝນັ້ນ ພວກລັກໝາກຫວ້າ ເຮັດໃຫ້ໝາກຫວ້າຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກຫວ້າຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດ ຄິດວ່າພວກເຈົ້າຂອງຈະເຫັນ ຈຶ່ງສັນໝາກຫວ້າ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໑)

ສະໄໝນັ້ນ ພວກລັກໝາກມີ້ປ່າ ເຮັດໃຫ້ໝາກມີ້ປ່າຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກມີ້ປ່າຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງສັນໝາກມີ້ປ່າ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໒)

ສະໄໝນັ້ນ ພວກລັກໝາກມີ້ ເຮັດໃຫ້ໝາກມີ້ຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກມີ້ຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງສັນໝາກມີ້ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ “ພວກທ່ານບໍ່ເປັນພຣະ” ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໆ໓)

ສະໄໝນັ້ນ ພວກລັກໝາກຕານສຸກ ເຮັດໃຫ້ໝາກຕານສຸກຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກຕານສຸກຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງສັນໝາກຕານສຸກ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ “ພວກທ່ານບໍ່ເປັນພຣະ” ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໆ໔)

ສະໄໝນັ້ນ ພວກລັກອ້ອຍ ຕັດອ້ອຍແລ້ວມັດຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນມັດອ້ອຍຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງສັນອ້ອຍ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ “ພວກທ່ານບໍ່ເປັນພຣະ” ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໆ໕)

ສະໄໝນັ້ນ ພວກລັກໝາກພັບ ເຮັດໃຫ້ໝາກພັບຫຼົ່ນແລ້ວຫໍ່ຖືໄປ ພວກເຈົ້າຂອງພາກັນຕິດຕາມ ພວກລັກເຫັນພວກເຈົ້າຂອງຈຶ່ງໂຍນຫໍ່ໝາກພັບຖິ້ມແລ້ວໜີໄປ ພວກພິກຂຸມີໄຖຍະຈິດຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງສັນໝາກພັບ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ “ພວກທ່ານບໍ່ເປັນພຣະ” ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໆ໖)

## ເລື້ອງລັກຂອງສົງ ໆ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝາກມ່ວງຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໆໆ)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝາກຫວ້າຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໗໘)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝາກມີ້ປ່າຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໗໙)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝາກມີ້ຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໐)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝາກຕານສຸກຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໑)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກອ້ອຍຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໒)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝາກພັບຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໓)

## ເລື້ອງລັກດອກໄມ້ ໔ ເລື້ອງ

[໑໔໙] ສະໄໝນັ້ນ ພິກຂຸອົງໜຶ່ງໄປສວນດອກໄມ້ ມີໄຖຍະຈິດ ໄດ້ລັກດອກໄມ້ທີ່ເຂົາເກັບໄວ້ແລ້ວ ມີລາຄາ ໕ ມາສົກ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດປາຣາຊິກ” (ເລື້ອງທີ ໘໔)

ສະໄໝນັ້ນ ພິກຂຸອົງໜຶ່ງໄປສວນດອກໄມ້ ມີໄຖຍະຈິດ ໄດ້ລັກເກັບດອກໄມ້ ມີລາຄາ ໕ ມາສົກ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດ ປາຣາຊິກ” (ເລື້ອງທີ ໘໕)

## ເລື້ອງເວົ້າຕາມຄຳບອກ ໓ ເລື້ອງ

[໑໕໐] ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງເຂົ້າໄປໝູ່ບ້ານ ໄດ້ບອກພິກຂຸອີກອົງໜຶ່ງວ່າ "ທ່ານ ເຮົາຈະໄປບອກຕະກູນອຸປັດຖາກໃຫ້ຕາມທີ່ທ່ານສັ່ງ" ເມື່ອທ່ານໄປເຖິງຈຶ່ງໃຫ້ເຂົານຳຜ້າມາ ໑ ຜືນແລ້ວໄດ້ໃຊ້ເອງ ພິກຂຸຜູ້ສັ່ງຮູ້ເຂົ້າຈຶ່ງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກ່າວວ່າ ເຮົາຈະບອກຕາມທີ່ທ່ານສັ່ງ ພິກຂຸໃດເພິ່ງກ່າວ ຕ້ອງອາບັດທຸກກົດ" (ເລື້ອງທີ ๗໘)

ສະໄໝນັ້ນ ພິກຂຸອົງໜຶ່ງຈະເຂົ້າໄປໝູ່ບ້ານ ພິກຂຸອີກອົງໜຶ່ງໄດ້ສັ່ງທ່ານວ່າ "ທ່ານຊ່ອຍບອກຕະກູນອຸປັດຖາກຂອງເຮົາຕາມທີ່ຂ້າພະເຈົ້າສັ່ງດ້ວຍ" ພິກຂຸນັ້ນເມື່ອໄປແລ້ວຈຶ່ງໃຫ້ຕະກູນອຸປັດຖາກນຳຜ້າມາ ໑ ຄູ່ ຕົນເອງໃຊ້ ໑ ຜືນ ຖວາຍພິກຂຸຜູ້ສັ່ງນັ້ນ ໑ ຜືນ ພິກຂຸຜູ້ສັ່ງຮູ້ເຂົ້າຈຶ່ງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກ່າວ ວ່າ ທ່ານຈົ່ງບອກຕາມທີ່ສັ່ງ ພິກຂຸໃດເພິ່ງກ່າວ ຕ້ອງອາບັດທຸກກົດ" (ເລື້ອງທີ ๗໙)

ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງໄປໝູ່ບ້ານ ໄດ້ບອກພິກຂຸອີກອົງໜຶ່ງວ່າ "ທ່ານ ເຮົາຈະໄປບອກຕະກູນອຸປັດຖາກຂອງທ່ານຕາມທີ່ທ່ານສັ່ງ" ພິກຂຸແມ່ນອົງນັ້ນກ່າວແນວນີ້ວ່າ "ທ່ານຊ່ອຍບອກຕາມທີ່ຂ້າພະເຈົ້າສັ່ງ" ພິກຂຸນັ້ນ ເມື່ອໄປເຖິງຈຶ່ງໃຫ້ຕະກູນອຸປັດຖາກນຳເນີຍໄສ ໑ ອາລະຫະກະ ນ້ຳອ້ອຍປ່ງງ ໑ ຕຸລະ ເຂົ້າສານ ໑ ໂທນະ ໑ ມາແລ້ວສັນສາເອງ ພິກຂຸຜູ້ສັ່ງຮູ້ເຂົ້າ ຈຶ່ງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ທ່ານເກີດຄວາມເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງ ກ່າວວ່າ ເຮົາຈະບອກຕາມທີ່ສັ່ງ ແລະບໍ່ເພິ່ງກ່າວວ່າ ທ່ານຈົ່ງບອກຕາມທີ່ສັ່ງ ພິກຂຸໃດເພິ່ງກ່າວ ຕ້ອງອາບັດທຸກກົດ" (ເລື້ອງທີ ๗๗)

## ເລື້ອງນຳແກ້ວມະນີຜ່ານດ່ານພາສີ ໓ ເລື້ອງ

[໑໕໑] ສະໄໝນັ້ນ ບຸຣຸດຄົນໜຶ່ງນຳແກ້ວມະນີລາຄາແພງ ເດີນທາງໄກໄປກັບພິກຂຸອົງໜຶ່ງ ເມື່ອເຫັນດ່ານພາສີ ຈຶ່ງໃສ່ແກ້ວມະນີລົງໃນຖົງຂອງພິກຂຸນັ້ນຜູ້ບໍ່ຮູ້ ເມື່ອຍ່າງພົ້ນດ່ານພາສີຈຶ່ງຖືໄປແຕ່ຜູ້ດຽວ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳ

ເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ຮູ້ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຮູ້ ບໍ່ຕ້ອງອາບັດ" (ເລື້ອງທີ ໗໙)

ສະໄໝນັ້ນ ບຸຣຸດຄົນໜຶ່ງນຳແກ້ວມະນີລາຄາແພງເດີນທາງໄກໄປກັບພິກຂຸອົງໜຶ່ງ ເມື່ອເຫັນດ່ານພາສີ ເຮັດລວງວ່າເປັນໄຂ້ແລ້ວມອບຫໍ່ຂອງຂອງຕົນໃຫ້ພິກຂຸຖືໄປ ເມື່ອຍ່າງພົ້ນດ່ານພາສີໄປ ຈຶ່ງກ່າວກັບພິກຂຸນັ້ນວ່າ "ທ່ານ ກະລຸນາສົ່ງຫໍ່ຂອງໃຫ້ເຮົາເທີ້ນ ເຮົາບໍ່ໄດ້ເປັນໄຂ້" "ທ່ານໄດ້ເຮັດແນວນີ້ເພື່ອອັນໃດ" ບຸຣຸດນັ້ນຈຶ່ງບອກຄວາມນັ້ນໃຫ້ພິກຂຸນັ້ນຮູ້ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ຮູ້ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຮູ້ ບໍ່ຕ້ອງອາບັດ" (ເລື້ອງທີ ໘໐)

[໑໕໘] ສະໄໝນັ້ນ ພິກຂຸອົງໜຶ່ງເດີນທາງໄກໄປກັບໝູ່ກວຽນ ຊາຍຄົນໜຶ່ງ ເກ້ຍກ່ອມທ່ານດ້ວຍອາມິດ ເຫັນດ່ານພາສີຈຶ່ງມອບແກ້ວມະນີລາຄາແພງໃຫ້ພິກຂຸນັ້ນດ້ວຍກ່າວວ່າ "ຂໍທ່ານກະລຸນາຊ່ອຍນຳແກ້ວມະນີນີ້ຜ່ານດ່ານພາສີໄປນຳຂ້ານ້ອຍ" ພິກຂຸນັ້ນໄດ້ນຳແກ້ວມະນີນັ້ນຜ່ານດ່ານພາສີໄປແລ້ວ ເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໑)

## ເລື້ອງປ່ອຍໝູ ໔ ເລື້ອງ

[໑໕໙] ສະໄໝນັ້ນ ພິກຂຸອົງໜຶ່ງປ່ອຍໝູທີ່ຖືກແຮ້ວໄປດ້ວຍຄວາມສົງສານແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຊ່ອຍເຫຼືອ ຂ້ານ້ອຍ" "ພິກຂຸ ທ່ານມີຄວາມປະສົງຈະຊ່ອຍເຫຼືອ ບໍ່ຕ້ອງອາບັດ" (ເລື້ອງທີ ໘໔)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດຄິດວ່າ ເຈົ້າຂອງຈະເຫັນ ຈຶ່ງປ່ອຍໝູທີ່ຖືກແຮ້ວໄປແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໕)

## ເລື້ອງປ່ອຍເນື້ອ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງປ່ອຍເນື້ອຖືກແຮ້ວໄປດ້ວຍຄວາມສົງສານແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກ

ເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຊ່ອຍເຫຼືອ ຂ້ານ້ອຍ" "ພິກຂຸ ທ່ານມີຄວາມປະສົງຈະຊ່ອຍເຫຼືອ ບໍ່ຕ້ອງອາບັດ" (ເລື້ອງທີ ໙໔)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດຄິດວ່າ ເຈົ້າຂອງຈະເຫັນ ຈຶ່ງປ່ອຍເນື້ອທີ່ຖືກແຮ້ວໄປແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໕)

## ເລື້ອງປ່ອຍປາ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງປ່ອຍຝູງປາທີ່ຕິດລອບໄປນຳຄວາມສົງສານແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະຊ່ອຍເຫຼືອ ຂ້ານ້ອຍ" "ພິກຂຸ ທ່ານມີຄວາມປະສົງຈະຊ່ອຍເຫຼືອ ບໍ່ຕ້ອງອາບັດ" (ເລື້ອງທີ ໙໖)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດຄິດວ່າ ເຈົ້າຂອງຈະເຫັນ ຈຶ່ງປ່ອຍຝູງປາທີ່ຕິດລອບໄປແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໗)

## ເລື້ອງກິ້ງຂຸັບໃນຍານ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເຫັນຂຸັບໃນຍານຄິດວ່າ ເມື່ອເຮົາຈັບໄປຈາກຍານນີ້ຈັກເປັນປາຣາຊິກ ຈຶ່ງເຂ່ຍໃຫ້ກິ້ງແລ້ວຖືເອົາ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກ ແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໘)

## ເລື້ອງຕ່ອນຊີ້ນ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຖືເອົາຕ່ອນຊີ້ນທີ່ແຫຼວຄາບເອົາມາ ດ້ວຍຕັ້ງໃຈວ່າຈະຄືນໃຫ້ເຈົ້າຂອງ ແຕ່ພວກເຈົ້າຂອງຊີ້ນກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີໄຖຍະຈິດ ບໍ່ຕ້ອງອາບັດ" (ເລື້ອງທີ ໙໙)

ສະໄໝນັ້ນ ພິກຂຸອົງໜຶ່ງ ມີໄຖຍະຈິດຄິດວ່າ ເຈົ້າຂອງຈະເຫັນ ໄດ້ຖືເອົາຕ່ອນຊີ້ນທີ່ແຫຼວຄາບເອົາມາ ພວກເຈົ້າຂອງຊີ້ນກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐໐)

## ເລື້ອງໄມ້ ໔ ເລື້ອງ

[໑໕໔] ສະໄໝນັ້ນ ພວກຊາວບ້ານຜູກແພແລ້ວຍູ້ລົງແມ່ນ້ຳອະຈິຣະວະດີ ເມື່ອເຊືອກຂາດໄມ້ທັງຫຼາຍໄດ້ກະຈາຍໄປ ພວກພິກຂຸສຳຄັນວ່າເປັນຂອງບັງສຸກຸນ ຈຶ່ງຊ່ອຍກັນຂົນໄມ້ຂຶ້ນຝັ່ງ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານສຳຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໐໑)

ສະໄໝນັ້ນ ພວກຊາວບ້ານຜູກແພແລ້ວຍູ້ລົງແມ່ນ້ຳອະຈິຣະວະດີ ເມື່ອເຊືອກຂາດ ໄມ້ທັງຫຼາຍໄດ້ກະຈາຍໄປ ພວກພິກຂຸມີໄຖຍະຈິດ ຄິດວ່າ ພວກເຈົ້າຂອງຈະເຫັນ ຈຶ່ງຊ່ອຍກັນຂົນໄມ້ຂຶ້ນຝັ່ງ ພວກເຈົ້າຂອງກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐໔)

## ເລື້ອງຜ້າບັງສຸກຸນ ໑ ເລື້ອງ

ສະໄໝນັ້ນ ຄົນລ້ຽງງົວຄົນໜຶ່ງພາດຜ້າໄວ້ທີ່ຕົ້ນໄມ້ແລ້ວໄປຖ່າຍອຸດຈາຣະ ພິກຂຸອົງໜຶ່ງສຳຄັນວ່າເປັນຜ້າບັງສຸກຸນ ຈຶ່ງຖືເອົາໄປ ຄົນລ້ຽງງົວກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານສຳຄັນວ່າເປັນຜ້າບັງສຸກຸນບໍ່ຕ້ອງອາບັດ" (ເລື້ອງທີ ໑໐໕)

## ເລື້ອງຂ້າມນ້ຳ ໔ ເລື້ອງ

ສະໄໝນັ້ນ ຜ້າຜືນໜຶ່ງລຸດຈາກມືພວກຊ່າງຍ້ອມໄປຕິດຢູ່ທີ່ຕີນຂອງພິກຂຸອົງໜຶ່ງຜູ້ກຳລັງຂ້າມນ້ຳ ທ່ານເກັບໄວ້ດ້ວຍຕັ້ງໃຈວ່າຈະນຳໄປຄືນໃຫ້ເຈົ້າຂອງ ພວກເຈົ້າຂອງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດ ປາຣາຊິກແລ້ວບໍ່ນໍ

ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງ ຕັດວ່າ "ພິກຂຸ ທ່ານບໍ່ມີໄຖຍະຈິດ ບໍ່ຕ້ອງອາບັດ" (ເລື່ອງທີ ໑໐໔)

ສະໄໝນັ້ນ ຜ້າຜືນໜຶ່ງລຸດຈາກມືພວກຊ່າງຍ້ອມໄປຕິດຢູ່ທີ່ຕີນຂອງພິກຂຸອົງໜຶ່ງຜູ້ກຳລັງຂ້າມນ້ຳ ທ່ານມີໄຖຍະຈິດຄິດວ່າ ພວກເຈົ້າຂອງຈະເຫັນ ໄດ້ຖືເອົາຜ້ານັ້ນໄປ ພວກເຈົ້າຂອງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໑໐໕)

## ເລື່ອງສັນເທື່ອລະໜ້ອຍ ໑ ເລື່ອງ

[໑໕໕] ສະໄໝນັ້ນ ພິກຂຸອົງໜຶ່ງພົບໝໍ້ເນີຍໄສຈຶ່ງສັນເນີຍໄສເທື່ອລະໜ້ອຍ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື່ອງທີ ໑໐໖)

## ເລື່ອງຊັກຊວນກັນໄປລັກ ໔ ເລື່ອງ

ສະໄໝນັ້ນ ພິກຂຸຫຼາຍອົງຊັກຊວນກັນໄປດ້ວຍຄິດຈະລັກຊັບ ພິກຂຸອົງໜຶ່ງ ລັກຊັບມາໄດ້ ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ພວກເຮົາບໍ່ເປັນປາຣາຊິກ ພິກຂຸອົງໃດລັກຊັບ ພິກຂຸອົງນັ້ນເປັນປາຣາຊິກ" ແລ້ວນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໑໐໗)

ສະໄໝນັ້ນ ພິກຂຸຫຼາຍອົງຊັກຊວນກັນໄປແລ້ວ ໄດ້ລັກຊັບມາ ແລ້ວແບ່ງກັນ ເມື່ອກຳລັງແບ່ງຊັບກັນ ພິກຂຸແຕ່ລະອົງໄດ້ສ່ວນແບ່ງບໍ່ຄົບ ໕ ມາສົກ ພິກຂຸເຫຼົ່ານັ້ນຈຶ່ງບອກ ວ່າ "ພວກເຮົາບໍ່ເປັນປາຣາຊິກ" ແລ້ວນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໑໐໘)

## ເລື່ອງກຳມືທີ່ນະຄອນສາວັດຖີ ໔ ເລື່ອງ

ສະໄໝນັ້ນ ນະຄອນສາວັດຖີເກີດອຶດຢາກ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກເຂົ້າສານຂອງຊາວຮ້ານຕະຫຼາດໄປ ໑ ກຳມື ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໑໐໙)

ສະໄໝນັ້ນ ນະຄອນສາວັດຖີເກີດອຶດຢາກ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກຖົ່ວຂຽວຂອງຊາວຮ້ານຕະຫຼາດໄປ ໑ ກໍາມື ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງ ຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑໐)

ສະໄໝນັ້ນ ນະຄອນສາວັດຖີເກີດອຶດຢາກ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກ ຖົ່ວຣາຊະມາດຂອງຊາວຮ້ານຕະຫຼາດໄປ ໑ ກໍາມື ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດ ປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑໑)

ສະໄໝນັ້ນ ນະຄອນສາວັດຖີເກີດອຶດຢາກ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກງາຂອງຊາວຮ້ານຕະຫຼາດໄປ ໑ ກໍາມື ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑໒)

## ເລື້ອງຊີ້ນເປັນເງື່ອນ ໔ ເລື້ອງ

ສະໄໝນັ້ນ ພວກໂຈນຂ້າງົວ ກິນຊີ້ນແລ້ວ ເຊື່ອງສ່ວນທີ່ເຫຼືອໄວ້ໃນປ່າອັນທະວັນ ເຂດນະຄອນສາວັດຖີ ແລ້ວພາກັນໄປ ພວກພິກຂຸສໍາຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສໍາບັນຖືເອົາໄປເຮັດໃຫ້ສຸກແລ້ວສັນ ພວກໂຈນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານສໍາຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໑໓)

ສະໄໝນັ້ນ ພວກໂຈນຂ້າໝູ ກິນຊີ້ນແລ້ວ ເຊື່ອງສ່ວນທີ່ເຫຼືອໄວ້ໃນປ່າອັນທະວັນ ເຂດນະຄອນສາວັດຖີແລ້ວພາກັນໄປ ພວກພິກຂຸສໍາຄັນວ່າເປັນຂອງບັງສຸກຸນ ຈຶ່ງໃຫ້ອະນຸປະສໍາບັນຖືເອົາໄປເຮັດໃຫ້ສຸກແລ້ວສັນ ພວກໂຈນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານສໍາຄັນວ່າເປັນຂອງບັງສຸກຸນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໑໔)

## ເລື້ອງຫຍ້າ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ທົ່ງຫຍ້າ ມີໄຖຍະຈິດ ໄດ້ລັກຫຍ້າທີ່ເຂົາກ່ຽວໄວ້ແລ້ວ ມີລາຄາ ໕ ມາສົກ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງ

ນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑໕)

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ທົ່ງຫຍ້າ ມີໄຖຍະຈິດ ໄດ້ລັກມັດຫຍ້າ ມີລາຄາ ໕ ມາສົກ ໄປແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໑໖)

## ເລື້ອງໃຫ້ແບ່ງຂອງສົງ ໗ ເລື້ອງ

[໑໕໖] ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງໝາກມ່ວງຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງຕ້ອງການຈະສັນ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໑໗)

ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງໝາກຫວ້າຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໑໘)

ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງໝາກມີ້ປ່າຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໑໙)

ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງໝາກມີ້ຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໒໐)

ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງໝາກຕານສຸກຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນ ບໍ່ຕ້ອງອາບັດ" (ເລື້ອງທີ ໑໘໑)

ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງອ້ອຍຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນ ບໍ່ຕ້ອງອາບັດ"(ເລື້ອງທີ ໑໘໒)

ສະໄໝນັ້ນ ພວກພິກຂຸອາຄັນຕຸກະໃຫ້ແບ່ງໝາກພັບຂອງສົງແລ້ວຂົບສັນ ພວກພິກຂຸເຈົ້າຖິ່ນກ່າວຫາພິກຂຸເຫຼົ່ານັ້ນວ່າ "ພວກທ່ານບໍ່ເປັນພຣະ" ພວກພິກຂຸອາຄັນຕຸກະເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງການຈະສັນບໍ່ຕ້ອງອາບັດ" (ເລື້ອງທີ ໑໘໓)

## ເລື້ອງບໍ່ແມ່ນເຈົ້າຂອງ ໆ ເລື້ອງ

ສະໄໝນັ້ນ ພວກຄົນເຝົ້າສວນໝາກມ່ວງໄດ້ຖວາຍໝາກມ່ວງແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໘໔)

ສະໄໝນັ້ນ ພວກຄົນເຝົ້າສວນໝາກຫວ້າໄດ້ຖວາຍໝາກຫວ້າແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໘໕)

ສະໄໝນັ້ນ ພວກຄົນເຝົ້າສວນໝາກມີ້ປ່າໄດ້ຖວາຍໝາກມີ້ປ່າແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວນຳເລື້ອງໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໘໖)

ສະໄໝນັ້ນ ພວກຄົນເຝົ້າສວນໝາກມີ້ໄດ້ຖວາຍໝາກມີ້ແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໘໗)

ສະໄໝນັ້ນ ພວກຄົນເຝົ້າສວນໝາກຕານສຸກໄດ້ຖວາຍໝາກຕານສຸກແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໘໘)

ສະໄໝນັ້ນ ພວກຄົນເຝົ້າໄຮ່ອ້ອຍໄດ້ຖວາຍລຳອ້ອຍແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໘໙)

ສະໄໝນັ້ນ ພວກຄົນເຝົ້າສວນໝາກພັບໄດ້ຖວາຍໝາກພັບແກ່ພິກຂຸທັງຫຼາຍ ພວກພິກຂຸມີຄວາມລັງກຽດວ່າ ຊົນເຫຼົ່ານີ້ມີໜ້າທີ່ເຝົ້າ ບໍ່ມີສິດຈະຖວາຍ ຈຶ່ງບໍ່ຍອມຮັບແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ບໍ່ຕ້ອງອາບັດ ຍ້ອນຄົນເຝົ້າຖວາຍ" (ເລື້ອງທີ ໑໙໐)

## ເລື້ອງຢືມໄມ້ຂອງສົງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງໄດ້ຢືມໄມ້ຂອງສົງໄປຄ້ຳຝາວິຫານ ພິກຂຸທັງຫຼາຍກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸອົງນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທ່ານຄິດແນວໃດ" "ຂ້າພຣະອົງ ຕ້ອງການຈະຂໍຢືມ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດ ຍ້ອນຂໍຢືມ" (ເລື້ອງທີ ໑໙໑)

## ເລື້ອງລັກນ້ຳຂອງສົງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກນ້ຳຂອງສົງ ແລ້ວເກີດຄວາມກັງວົນໃຈວ່າເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໙໒)

## ເລື້ອງລັກດິນຂອງສົງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກດິນຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໓໓)

## ເລື້ອງລັກຫຍ້າຂອງສົງ ໘ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກຫຍ້າມຸງກະຕ່າຍຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໓໔)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ເຜົາຫຍ້າມຸງກະຕ່າຍຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໓໕)

## ເລື້ອງລັກເສນາສະນະຂອງສົງ ໗ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກຕຽງຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໓໖)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກຕັ່ງຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໓໗)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກຟູກຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໓໘)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໝອນຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໓໙)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກບານປະຕູຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໘໐)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກບານໜ້າຕ່າງຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໘໑)

ສະໄໝນັ້ນ ພິກຂຸອົງໜຶ່ງມີໄຖຍະຈິດ ໄດ້ລັກໄມ້ກອນຂອງສົງ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໘໔)

## ເລື້ອງຂອງມີເຈົ້າຂອງບໍ່ຄວນນຳໄປໃຊ້ ໑ ເລື້ອງ

[໑໕໗] ສະໄໝນັ້ນ ພິກຂຸທັງຫຼາຍໄດ້ນຳເສນາສະນະເຄື່ອງໃຊ້ສອຍປະຈຳໃນວິຫານຂອງອຸປາສົກຄົນໜຶ່ງໄປໃຊ້ສອຍທີ່ອື່ນ ອຸປາສົກນັ້ນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ຄູບາທັງຫຼາຍຈຶ່ງນຳເຄື່ອງໃຊ້ສອຍປະຈຳໃນທີ່ແຫ່ງໜຶ່ງ ໄປໃຊ້ໃນທີ່ອີກແຫ່ງໜຶ່ງ ນໍ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍເຄື່ອງໃຊ້ສອຍໃນທີ່ແຫ່ງໜຶ່ງ ບໍ່ເພິ່ງນຳໄປໃຊ້ສອຍໃນທີ່ອີກແຫ່ງໜຶ່ງ ພິກຂຸໃດເພິ່ງໃຊ້ສອຍ ຕ້ອງອາບັດທຸກກົດ" (ເລື້ອງທີ ໑໘໓)

## ເລື້ອງຂອງມີເຈົ້າຂອງຄວນຂໍຢືມ ໑ ເລື້ອງ

ສະໄໝນັ້ນ ພິກຂຸທັງຫຼາຍລັງກຽດການນຳເສນາສະນະເຄື່ອງໃຊ້ສອຍ ໂຮງອຸໂປສົດແດ່ທີ່ປະຊຸມແດ່ ຈຶ່ງນັ່ງເທິງພື້ນດິນ ຕົນໂຕແລະຈີວອນຈຶ່ງເປື້ອນຝຸ່ນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນຳໄປໃຊ້ໄດ້ມີກຳນົດ" (ເລື້ອງທີ ໑໘໔)

## ເລື້ອງພິກຂຸນີຊາວນະຄອນຈຳປາ ໑ ເລື້ອງ

ສະໄໝນັ້ນ ພິກຂຸນີຜູ້ເປັນອັນເຕວາສີນີຂອງພິກຂຸນີຖຸນລະນັນທາ ໄປສູ່ຕະກູນອຸປັດຖາກຂອງພິກຂຸນີຖຸນລະນັນທາ ໃນນະຄອນຈຳປາ ບອກຄົນໃນຕະກູນວ່າ "ພິກຂຸນີຖຸນລະນັນທາປະສົງຈະດື່ມເຂົ້າຍາຄູປຸງດ້ວຍຂອງ ໓ ຢ່າງ" ເມື່ອເຂົາຫຸງຫາໃຫ້ແລ້ວທ່ານກັບນຳໄປສັນສາເອງພິກຂຸນີຖຸນລະນັນທາຮູ້ເຂົ້າຈຶ່ງກ່າວຫາພິກຂຸນີນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸນີນັ້ນເກີດຄວາມກັງວົນໃຈຈຶ່ງບອກຄວາມນັ້ນແກ່ພິກຂຸນີທັງຫຼາຍ ພວກພິກຂຸນີຈຶ່ງບອກແກ່ພິກຂຸທັງຫຼາຍ ພວກພິກ

ຊຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸນີນັ້ນບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕິ ຍ້ອນກ່າວຕົວະທັງທີ່ຮູ້" (ເລື່ອງທີ ໑໔໘)

## ເລື່ອງພິກຂຸນີຊາວນະຄອນຣາຊະຄຶ ໑ ເລື່ອງ

ສະໄໝນັ້ນ ພິກຂຸນີຜູ້ເປັນອັນເຕວາສິນີຂອງພິກຂຸນີຖຸນລະນັນທາ ໄປສູ່ຕະກູນອຸປັດຖາກຂອງພິກຂຸນີຖຸນລະນັນທາໃນນະຄອນຣາຊະຄຶ ບອກຄົນໃນຕະກູນວ່າ "ພິກຂຸນີຖຸນລະນັນທາປະສົງຈະສັນເຂົ້າໜົມຮັງເຜິ້ງ" ເມື່ອສັ່ງໃຫ້ເຂົາຈືນແລ້ວທ່ານກັບນຳໄປສັນສາເອງ ພິກຂຸນີຖຸນລະນັນທາຮູ້ເຂົ້າຈຶ່ງກ່າວຫາພິກຂຸນີນັ້ນວ່າ "ທ່ານບໍ່ເປັນພຣະ" ພິກຂຸນີນັ້ນເກີດຄວາມກັງວົນໃຈຈຶ່ງບອກຄວາມນັ້ນແກ່ພິກຂຸນີທັງຫຼາຍ ພວກພິກຂຸນີຈຶ່ງບອກແກ່ພິກຂຸທັງຫຼາຍ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸນີນັ້ນບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕິ ຍ້ອນກ່າວຕົວະທັງທີ່ຮູ້" (ເລື່ອງທີ ໑໔໙)

## ເລື່ອງພຣະອັດຊຸກະຊາວນະຄອນເວສາລີ ໑ ເລື່ອງ

[໑໕໗] ຄະຫະບໍດີຜູ້ເປັນອຸປັດຖາກຂອງພຣະອັດຊຸກະ ໃນນະຄອນເວສາລີ ມີບຸດ ໑ ຄົນ ຫຼານ ໑ ຄົນ ຕໍ່ມາ ເຂົາສັ່ງເສຍທ່ານພຣະອັດຊຸກະວ່າ "ທ່ານເພິ່ງບອກທີ່ຝັງຊັບແກ່ເດັກ ຜູ້ມີສັດທາເຫຼື້ອມໃສ ໃນບັນດາເດັກ ໔ ຄົນນີ້" ແລ້ວເຖິງແກ່ກຳ ເວລານັ້ນຜາກົດວ່າຫຼານຊາຍຂອງຄະຫະບໍດີເປັນຜູ້ມີສັດທາເຫຼື້ອມໃສ ທ່ານພຣະອັດຊຸກະຈຶ່ງບອກທີ່ຝັງຊັບແກ່ເຂົາ ເຂົານຳຊັບສົມບັດມາຕັ້ງເປັນກອງທຶນ ແລະເລີ່ມໃຫ້ທານ

ຕໍ່ມາບຸດຂອງຄະຫະບໍດີນັ້ນ ໄດ້ຮຽນຖາມທ່ານພຣະອານົນວ່າ "ທ່ານອານົນ ໃຜເປັນທາຍາດຂອງພໍ່ ລູກ ຫຼື ຫຼານ"

"ທຳມະດາລູກຕ້ອງເປັນທາຍາດຂອງພໍ່"

"ທ່ານ ຂ້ານ້ອຍ ຄູບາອັດຊຸກະບອກຊັບສົມບັດຂອງຂ້ານ້ອຍ ແກ່ຄູ່ແຂ່ງຂອງຂ້ານ້ອຍໄປແລ້ວ"

"ທ່ານພຣະອັດຊຸກະບໍ່ເປັນພຣະ"

ລຳດັບນັ້ນ ທ່ານພຣະອັດຊຸກະກ່າວກັບທ່ານພຣະອານົນວ່າ "ທ່ານອານົນ ທ່ານໂຜດໃຫ້ການວິນິດໄສແກ່ຂ້ານ້ອຍເທີ້ນ"

ທ່ານພຣະອຸບາລີຢູ່ຝ່າຍພຣະອັດຊຸກະ ຖາມພຣະອານົນວ່າ "ທ່ານອານົນ ພິກຂຸອົງໃດບອກຂຸມຊັບແກ່ບຸກຄົນຕາມທີ່ເຈົ້າຂອງສັ່ງໃຫ້ບອກ ພິກຂຸອົງນັ້ນຈະຕ້ອງອາບັດອັນໃດ"

ທ່ານພຣະອານົນຕອບວ່າ "ພິກຂຸນັ້ນຈະບໍ່ຕ້ອງອາບັດອັນໃດເລີຍ ໂດຍທີ່ສຸດແມ່ນແຕ່ອາບັດທຸກກົດ"

ທ່ານພຣະອຸບາລີຈຶ່ງກ່າວວ່າ "ພຣະອັດຊຸກະນີ້ ອັນເຈົ້າຂອງຊັບສັ່ງໄວ້ວ່າ ທ່ານໂຜດບອກທີ່ຝັງຊັບນີ້ແກ່ບຸກຄົນຊື່ນີ້ ຈຶ່ງໄດ້ບອກແກ່ຜູ້ນັ້ນ ດັ່ງນັ້ນ ພຣະອັດຊຸກະຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໑໔໗)

## ເລື້ອງເດັກອ່ອນຊາວນະຄອນພາຣານະສີ ໑ ເລື້ອງ

[໑໕໘] ຕະກູນອຸປັດຖາກຂອງທ່ານພຣະປີລິນທະວັດສະໃນນະຄອນພາຣານະສີ ຖືກໂຈນປຸ້ນແລະພາເດັກໄປ ໔ ຄົນ ຕໍ່ມາ ທ່ານພຣະປີລິນທະວັດສະຊ່ອຍນຳເດັກໜີອອກມາໄວ້ ທີ່ຜາສາດດ້ວຍອິດທິລິດ ຊາວບ້ານເຫຼື້ອມໃສວ່າ ນີ້ເປັນອິດທານຸພາບຂອງທ່ານ ພຣະປີລິນທະວັດສະໂດຍແທ້ ພິກຂຸທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານປີລິນທະວັດສະຈຶ່ງນຳເດັກທີ່ພວກໂຈນພາຕົວໄປມານໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ມີລິດບໍ່ຕ້ອງອາບັດ ຍ້ອນວິໄສແຫ່ງລິດ" (ເລື້ອງທີ ໑໔໘)

## ເລື້ອງພິກຂຸຊາວນະຄອນໂກສຳພີ ໑ ເລື້ອງ

[໑໖໐] ສະໄໝນັ້ນ ພຣະປັນຖຸກະແລະພຣະກະປີລະເປັນເພື່ອນກັນ ອົງໜຶ່ງຢູ່ໃນອາວາດໃກ້ໝູ່ບ້ານ ອີກອົງໜຶ່ງຢູ່ໃນນະຄອນໂກສຳພີ ຕໍ່ມາເພື່ອນພິກຂຸຜູ້ຢູ່ໃນໝູ່ບ້ານເດີນທາງຈາກໝູ່ບ້ານໄປນະຄອນໂກສຳພີ ລະຫວ່າງທາງ ຂ້າມແມ່ນ້ຳ ນ້ຳມັນຊຸ້ນທີ່ລຸດຈາກມືຂອງພວກຄົນຂ້າໝູລອຍມາຕິດທີ່ຕີນ ທ່ານຈຶ່ງເກັບໄວ້ດ້ວຍຕັ້ງໃຈວ່າຈະໃຫ້ຄືນແກ່ເຈົ້າຂອງ ພວກເຈົ້າຂອງກ່າວຫາພິກຂຸນັ້ນວ່າ "ທ່ານບໍ່ເປັນພຣະ" ແມ່ຍິງລ້ຽງງົວຄົນໜຶ່ງພົບທ່ານຂ້າມນ້ຳ ຈຶ່ງໄດ້ກ່າວກັບທ່ານດັ່ງນີ້ວ່າ "ທ່ານ ນິມົນມາເສບເມຖຸນທຳກັນເທີ້ນ ຂ້ານ້ອຍ" ທ່ານຄິດວ່າ ແມ່ນຕາມປົກກະຕິ ເຮົາກໍບໍ່ເປັນພຣະຢູ່ແລ້ວ ຈຶ່ງເສບເມຖຸນທຳກັບແມ່ຍິງລ້ຽງງົວ ແລ້ວເດີນທາງເຖິງນະຄອນໂກສຳພີເລົ່າເລື່ອງນັ້ນໃຫ້ພິກຂຸທັງຫຼາຍຟັງ ພວກພິກຂຸຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸນັ້ນບໍ່ຕ້ອງອາບັດປາຣາຊິກຍ້ອນຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ແຕ່ຕ້ອງອາບັດປາຣາຊິກຍ້ອນເສບເມຖຸນທຳ" (ເລື້ອງທີ ໑໔໙)

## ເລື້ອງສັດທິວິຫາຣິກຂອງພຣະທັນທິກະນະຄອນສາຄະລະ ໑ ເລື້ອງ

[໑໖໑] ສະໄໝນັ້ນ ພິກຂຸສັດທິວິຫາຣິກຂອງທ່ານພຣະທັນທິກະ ນະຄອນສາຄະລະ ຢາກຈະສິກຈຶ່ງໄປລັກຜ້າໂພກຂອງຊາວຮ້ານຕະຫຼາດມາແລ້ວ ໄດ້ກ່າວກັບທ່ານພຣະທັນທິກະດັ່ງນີ້ວ່າ "ຂ້ານ້ອຍບໍ່ເປັນພຣະແລ້ວ ຈັກສິກແລ້ວ ຂ້ານ້ອຍ"

"ທ່ານເຮັດຜິດອັນໃດນໍ?"

"ຂ້ານ້ອຍລັກຜ້າໂພກຫົວຂອງຊາວຮ້ານຕະຫຼາດ"

ທ່ານພຣະທັບທີກະໃຫ້ນຳຜ້ານັ້ນມາຕີລາຄາ ລາຄາຜ້າບໍ່ເຖິງ ໕ ມາສົກ ທ່ານພຣະທັບທິກະກ່າວວ່າ "ທ່ານບໍ່ຕ້ອງອາບັດປາຣາຊິກ" ແລ້ວໄດ້ສະແດງທຳມີກະຖາໃຫ້ຟັງ ພິກຂຸນັ້ນຍິນດີຍິ່ງ (ເລື້ອງທີ ໑໕໐)

**ປາຣາຊິກສິກຂາບົດທີ ໒ ຈົບ**

# ປາຣາຊິກສິກຂາບົດທີ ໓

## ວ່າດ້ວຍການພາກກາຍມະນຸດ

### ເລື້ອງໝູ່ພິກຂຸຜູ້ຈະເລີນອະສຸພະກຳມັດຖານກັບຕາເຖນມິຄະລັນຖິກະ

[໑໖໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນກູຕາຄານສາລາ ໃນປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນລະນາຄຸນອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານ ຕັດພັນລະນາຄຸນອະສຸພະສະມາບັດຢູ່ເນືອງ ໆ ແກ່ພິກຂຸທັງຫຼາຍ ໂດຍປະການຕ່າງ ໆ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາປາຖະ ໜາຈະຫຼີບຫຼີກຢູ່ຜູ້ດຽວຈັກເຄິ່ງເດືອນ ຜູ້ໃດກໍຕາມຢ່າເຂົ້າໄປຫາເຮົາ ຍົກເວັ້ນພິກຂຸຜູ້ນຳພັດຕາຫານເຂົ້າໄປໃຫ້ອົງດຽວ"

ພິກຂຸທັງຫຼາຍຮັບສະໜອງພຣະພຸດທະດຳຣັດວ່າ "ໄດ້ ຂ້ານ້ອຍ" ບໍ່ມີໃຜເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ນອກຈາກພິກຂຸຜູ້ນຳພັດຕາຫານເຂົ້າໄປທູນຖວາຍອົງດຽວ

ພິກຂຸທັງຫຼາຍສົນທະນາກັນວ່າ "ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນລະນາຄຸນອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານ ຕັດພັນລະນາຄຸນອະສຸພະສະມາບັດຢູ່ເນືອງ ໆ ແກ່ພິກຂຸທັງຫຼາຍໂດຍປະການຕ່າງ ໆ" ແລ້ວພາກັນປະກອບຄວາມພຽນໃນການຈະເລີນອະສຸພະກຳມັດຖານຫຼາຍປະການ ຈົນວ່າເກີດຄວາມຮູ້ສຶກອຶດອັດເບື່ອໜ່າຍ ລັງກຽດຮ່າງ ກາຍຂອງຕົນ ເໝືອນຊາຍ ຫຼື ແມ່ຍິງທີ່ເປັນໜຸ່ມເປັນສາວມັກແຕ່ງໂຕອາບນໍ້າ ສະຫົວ ມີຊາກສົບງູ ຊາກສົບໝາ ຫຼື ຊາກສົບມະນຸດມາຕິດຢູ່ທີ່ຄໍ ເກີດຄວາມຮູ້ສຶກອຶດອັດ ເບື່ອໜ່າຍ ລັງກຽດ ພິກຂຸເຫຼົ່ານັ້ນຈຶ່ງຂ້າໂຕຕາຍເອງແດ່ ໃຊ້ກັນ ແລະ ກັນໃຫ້ຂ້າແດ່ ພິກຂຸບາງກຸ່ມພາກັນເຂົ້າໄປຫາຕາເຖນມິຄະລັນຖິກະ ບອກວ່າ "ຂໍໂອກາດແດ່ເທີ້ນ ທ່ານຊ່ອຍຂ້າພວກອາດຕະມາແດ່ເທີ້ນ ບາດແລະຈີວອນນີ້ຈັກເປັນຂອງທ່ານ" ຕາເຖນມິຄະລັນຖິກະຮັບຈ້າງເອົາບາດ ແລະ ຈີວອນ ແລ້ວຂ້າພິກຂຸເປັນຈຳນວນຫຼວງຫຼາຍ ຖືດາບເປື້ອນເລືອດຍ່າງໄປເຖິງແມ່ນໍ້າວັກຄຸມຸທາ

[໑໖໓] ເມື່ອຕາເຖນມິລັນຖິກະກຳລັງລ້າງດາບເປື້ອນເລືອດຢູ່ ໄດ້ມີຄວາມກັງວົນໃຈເດືອດຮ້ອນໃຈວ່າ ບໍ່ແມ່ນລາບຂອງເຮົາແລ້ວນໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍ ເຮົາໄດ້ບໍ່ດີແລ້ວນໍ ເຮົາໄດ້ສ້າງບາບໄວ້ຫຼາຍທີ່ໄດ້ຂ້າພິກຂຸຜູ້ມີສິນມີກັນລະຍານະທຳ

ຂະນະນັ້ນເທວະດາຜູ້ນັບເນື່ອງໃນໝູ່ມານຕົນໜຶ່ງ ຍ່າງມາເທິງຜີວນ້ຳບໍ່ແຕກກະເຊັນກ່າວວ່າ "ດີແລ້ວ ໆ ທ່ານສັດຕະບຸຣຸດ ເປັນລາບເປັນໂຊກຂອງທ່ານ ທ່ານໄດ້ສັ່ງສົມບຸນໄວ້ຫຼາຍທີ່ໄດ້ຊ່ອຍສິ່ງຄົນທີ່ຍັງບໍ່ພົ້ນທຸກໃຫ້ພົ້ນທຸກໄດ້"

ເມື່ອຕາເຖນມິຄະລັນຖິກໍໄດ້ຂ່າວວ່າ ເປັນລາບເປັນໂຊກຂອງເຮົາ ເຮົາໄດ້ສັ່ງສົມບຸນໄວ້ຫຼາຍທີ່ໄດ້ຊ່ອຍສິ່ງຄົນທີ່ຍັງບໍ່ພົ້ນທຸກໃຫ້ຂ້າມພົ້ນທຸກໄດ້ ຈຶ່ງຖືດາບຄົມແຫຼມເຂົ້າໄປບໍລິເວນວິຫານກ່າວວ່າ "ໃຜທີ່ຍັງບໍ່ພົ້ນທຸກ ຂ້າພະເຈົ້າຈະຊ່ອຍໃຫ້ໃຜພົ້ນທຸກໄດ້ແດ່"

ໃນພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍັງມີຣາຄະ ເກີດຄວາມຫວາດກົວຂົນພອງສະຫຍອງເກົ້າສ່ວນພວກພິກຂຸຜູ້ທີ່ບໍ່ມີຣາຄະ ຍ່ອມບໍ່ຫວາດກົວ ບໍ່ຂົນພອງສະຫຍອງເກົ້າ

ເວລານັ້ນ ເຂົາຂ້າພິກຂຸວັນລະ ໑ ອົງແດ່ ໒ ອົງແດ່ ໓ ອົງແດ່ ໔ ອົງແດ່ ໕ ອົງແດ່ ໖ ອົງແດ່ ໗ ອົງແດ່ ໘ ອົງແດ່ ໙ ອົງແດ່ ໑໐ ອົງແດ່ ໒໐ ອົງແດ່ ໓໐ ອົງແດ່ ໔໐ ອົງແດ່ ໕໐ ອົງແດ່ ໖໐ ອົງແດ່

## ຮັບສັ່ງໃຫ້ບອກໃຫ້ສົງ

[໑໖໔] ເມື່ອເຄິ່ງເດືອນຜ່ານໄປ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີບຫຼີກ ຕັດຮຽກທ່ານພຣະອານົນມາຕັດຖາມວ່າ "ອານົນ ເປັນຫຍັງ ພິກຂຸສົງຈຶ່ງເບິ່ງຄືວ່າຈະໜ້ອຍລົງ"

ທ່ານພຣະອານົນຂາບທູນວ່າ "ຈິງຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນລະນາຄຸນອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານຕັດພັນລະນາຄຸນອະສຸພະສະມາບັດເນືອງ ໆ ແກ່ພິກຂຸທັງຫຼາຍໂດຍປະການຕ່າງ ໆ ແລະພິກຂຸເຫຼົ່ານັ້ນກ່າວວ່າ "ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນລະນາຄຸນອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານ ຕັດພັນລະນາອະສຸພະສະມາບັດເນືອງ ໆ ໂດຍປະການຕ່າງ ໆ" ຈຶ່ງພາກັນປະກອບຄວາມພຽນໃນການຈະເລີນອະສຸພະກຳມັດຖານຫຼາຍປະການ ຈົນວ່າເກີດຄວາມຮູ້ສຶກອຶດອັດ ເບື່ອໜ່າຍ ລັງກຽດຮ່າງກາຍຂອງຕົນ ເໝືອນຊາຍຫຼື ແມ່ຍິງທີ່ເປັນໜຸ່ມເປັນສາວມັກແຕ່ງໂຕອາບນ້ຳສະຫົວ ມີຊາກສົບງູ ຊາກສົບໝາ ຫຼື ຊາກສົບມະນຸດ ມາຕິດຢູ່ທີ່ຄໍ ເກີດຄວາມຮູ້ສຶກອຶດອັດ ເບື່ອໜ່າຍ ລັງກຽດ ພິກຂຸເຫຼົ່ານັ້ນຈຶ່ງຂ້າໂຕຕາຍເອງແດ່ ໃຊ້ກັນແລະກັນໃຫ້ຂ້າແດ່ ພິກຂຸບາງກຸ່ມພາກັນໄປຫາຕາເຖນມິຄະລັນຖິກະບອກວ່າ "ຂໍໂອກາດແດ່ເທີ້ນ ທ່ານຊ່ອຍຂ້າພວກອາດຕະມາແດ່ເທີ້ນ ບາດແລະຈີວອນນີ້ຈັກເປັນຂອງທ່ານ"

ຕາເຖນນິຄະລັນຖິກະ ຮັບຈ້າງເອົາບາດແລະຈີວອນ ຈຶ່ງຂ້າພິກຂຸວັນລະ ໑ ອົງແດ່ ໗ລ໗ ວັນລະ ໖໐ ອົງແດ່ ຂໍປະທານພຣະວະໂຣກາດ ຂໍພຣະອົງໂຜດກະລຸນາຕັດບອກວິທີອື່ນທີ່ພິກຂຸສົງຈະເພິ່ງດຳລົງຢູ່ໃນອະຣະຫັດຕະຜົນເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າເຊັ່ນນັ້ນທ່ານຈົ່ງບອກໃຫ້ພິກຂຸເທົ່າທີ່ອາໄສນະຄອນເວສາລີຢູ່ທັງໝົດໃຫ້ປະຊຸມກັນທີ່ໂຮງອາຫານ"

ທ່ານພຣະອານົນທູນຮັບສະໜອງພຣະພຸດທະດຳຣັດ ແລ້ວບອກໃຫ້ພິກຂຸສົງທີ່ອາໄສນະຄອນເວສາລີຢູ່ທັງໝົດໃຫ້ປະຊຸມທີ່ໂຮງອາຫານ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸສົງປະຊຸມພ້ອມກັນແລ້ວ ຂໍພຣະອົງຊົງພຣະກະລຸນາໂຜດຮູ້ເວລາອັນສົມຄວນໃນບັດນີ້"

## ຊົງສະແດງອານາປານະສະຕິສະມາທິກະຖາ

[໑໖໕] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປທີ່ໂຮງອາຫານ ປະທັບນັ່ງເທິງພຸດທະອາດທີ່ຈັດຖວາຍ ຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ອານາປານະສະຕິສະມາທິແມ່ນນີ້ທີ່ຈະເລີນແລ້ວເຮັດໃຫ້ຫຼາຍແລ້ວ ຍ່ອມເປັນສະພາບສະງົບປະນີດ ສົດຊື່ນ ເປັນທຳເຄື່ອງຢູ່ເປັນສຸກ ແລະເຮັດອະກຸສົນທຳຊົ່ວຮ້າຍທີ່ເກີດຂຶ້ນແລ້ວ ໆ ໃຫ້ສູນຫາຍໄປ ສະງົບໄປໂດຍໄວ ປຽບເໝືອນຝຸ່ນລະອອງທີ່ຟຸ້ງຂຶ້ນທ້າຍລະດູຮ້ອນ ຖືກຝົນໃຫຍ່ນອກລະດູການໃຫ້ສູນຫາຍໄປ ສະງົບໄປໂດຍໄວ ອານາປານະສະຕິສະມາທິທີ່ຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນສະພາບສະງົບປະນີດ ສົດຊື່ນ ເປັນທຳເຄື່ອງຢູ່ເປັນສຸກແລະເຮັດອະກຸສົນທຳຊົ່ວຮ້າຍທີ່ເກີດຂຶ້ນແລ້ວ ໆ ໃຫ້ສູນຫາຍໄປ ສະງົບໄປໂດຍໄວ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ມີສະຕິຫັນໃຈອອກ ມີສະຕິຫັນໃຈເຂົ້າ

## ອານາປານະສະຕິ ໑໖ ຂັ້ນ

(໑) ເມື່ອຫັນໃຈອອກຍາວ ກໍຮູ້ຊັດແຈ້ງວ່າຫັນໃຈອອກຍາວ
ເມື່ອຫັນໃຈເຂົ້າຍາວ ກໍຮູ້ຊັດແຈ້ງວ່າຫັນໃຈເຂົ້າຍາວ
(໒) ເມື່ອຫັນໃຈອອກສັ້ນ ກໍຮູ້ຊັດແຈ້ງວ່າຫັນໃຈອອກສັ້ນ
ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ຊັດແຈ້ງວ່າຫັນໃຈເຂົ້າສັ້ນ
(໓) ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງກອງລົມທັງປວງ ຫັນໃຈອອກ
ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງກອງລົມທັງປວງ ຫັນໃຈເຂົ້າ
(໔) ຕັ້ງໃຈຮູ້ວ່າ ຈະລະງັບກາຍສັງຂານ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະລະງັບກາຍສັງຂານ ຫັນໃຈເຂົ້າ

(໕) ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງປີຕິ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງປີຕິ ຫັນໃຈເຂົ້າ

(໖) ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງສຸກ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງສຸກ ຫັນໃຈເຂົ້າ

(໗) ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງຈິດຕະສັງຂານ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງຈິດຕະສັງຂານ ຫັນໃຈເຂົ້າ

(໘) ຕັ້ງໃຈຮູ້ວ່າ ຈະລະງັບຈິດຕະສັງຂານ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະລະງັບຈິດຕະສັງຂານ ຫັນໃຈເຂົ້າ

(໙) ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງຈິດ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະຮູ້ຊັດແຈ້ງຈິດ ຫັນໃຈເຂົ້າ

(໑໐) ຕັ້ງໃຈຮູ້ວ່າ ຈະຍັງຈິດໃຫ້ບັນເທີງ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະຍັງຈິດໃຫ້ບັນເທີງ ຫັນໃຈເຂົ້າ

(໑໑) ຕັ້ງໃຈຮູ້ວ່າ ຈະຕັ້ງຈິດໝັ້ນ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະຕັ້ງຈິດໝັ້ນ ຫັນໃຈເຂົ້າ

(໑໒) ຕັ້ງໃຈຮູ້ວ່າ ຈະປົດຈິດ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະປົດຈິດ ຫັນໃຈເຂົ້າ

(໑໓) ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈເຂົ້າ

(໑໔) ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈເຂົ້າ

(໑໕) ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈເຂົ້າ

(໑໖) ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນຄວາມສະລັດອອກໄດ້ ຫັນໃຈອອກ

ຕັ້ງໃຈຮູ້ວ່າ ຈະພິຈາລະນາເຫັນຄວາມສະລັດອອກໄດ້ ຫັນໃຈເຂົ້າ"

## ຊົງປະຊຸມສົງບັນຍັດສິກຂາບົດ

[໑໖໖] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຂ້າໂຕຕາຍເອງແດ່ ໃຊ້ກັນແລະກັນໃຫ້ຂ້າແດ່ ບາງກຸ່ມພາກັນເຂົ້າໄປຫາຕາເຖນມິຄະລັນຖິກະ ບອກວ່າ "ຂໍໂອກາດທ່ານ ຊ່ອຍຂ້າພວກອາດຕະມາແດ່ເທີ້ນ ບາດແລະຈີວອນນີ້ຈັກເປັນຂອງທ່ານ" ແມ່ນບໍ?" ພິກຂຸ

ທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງພິກຂຸເຫຼົ່ານັ້ນ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ບໍ່ຄວນເຮັດ ເປັນຫຍັງພິກຂຸເຫຼົ່ານັ້ນ ຈຶ່ງຂ້າໂຕຕາຍເອງແດ່ ໃຊ້ກັນ ແລະ ໃຫ້ຂ້າແດ່ ບາງກຸ່ມພາກັນເຂົ້າໄປຫາຕາເຖນມິຄະລັນຖິກະ ບອກວ່າ "ຂໍໂອກາດ ທ່ານ ຊ່ອຍຂ້າພວກອາດຕະມາແດ່ເທີ້ນ ບາດແລະຈີວອນນີ້ຈັກເປັນຂອງທ່ານ" ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໖໗] **ກໍ ພິກຂຸໃດ ຈົງໃຈພາກກາຍມະນຸດຈາກຊີວິດ ຫຼື ສະແຫວງຫາອາວຸດອັນຈະພາກກາຍມະນຸດນັ້ນໄປ ແມ່ນພິກຂຸນີ້ກໍເປັນປາຣາຊິກ ຫາສັງວາດບໍ່ໄດ້**

ສິກຂາບົດນີ້ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວແນວນີ້

### ເລື້ອງໝູ່ພິກຂຸຜູ້ຈະເລີນອະສຸພະກຳມັດຖານກັບຕາເຖນມິຄະລັນຖິກະ ຈົບ

## ເລື້ອງພຣະສັບພັກຄີ

[໑໖໘] ສະໄໝນັ້ນ ອຸປາສົກຄົນໜຶ່ງລົ້ມປ່ວຍ ເຂົາມີພັນລະຍາຮູບງາມ ໜ້າເບິ່ງ ໜ້າຊົມ ພວກພິກຂຸສັບພັກຄີມັກພັນລະຍາຂອງເຂົາຈຶ່ງປຶກສາວ່າ "ຖ້າອຸປາສົກຍັງມີຊີວິດ ພວກເຮົາຈັກບໍ່ໄດ້ນາງມາຊ່ອຍກັນກ່າວພັນລະນາຄຸນຄວາມຕາຍໃຫ້ເຂົາຟັງເທີ້ນ" ຈຶ່ງເຂົ້າໄປຫາອຸປາສົກກ່າວວ່າ "ອຸປາສົກ ທ່ານເຮັດຄຸນງາມຄວາມດີ ເຮັດທີ່ຕ້ານທານຄວາມຢ້ານໄວ້ແລ້ວ ບໍ່ໄດ້ເຮັດຊົ່ວ ບໍ່ໄດ້ເຮັດບາບຫຍາບຊ້າທາລຸນອັນໃດໄວ້ ທ່ານສ້າງແຕ່ຄຸນງາມຄວາມດີ ບໍ່ສ້າງກຳຊົ່ວເລີຍ ຈະມີຊີວິດຢູ່ຢ່າງລຳບາກຍາກເຂັນໄປເຮັດຫຍັງ ທ່ານຕາຍສາດີກວ່າ ຫຼັງຈາກຕາຍແລ້ວ ຈັກໄປບັງເກີດໃນສຸກຄະຕິ ໂລກສະຫວັນ ຈັກເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ອັນເປັນທິບ"

[໑໖໙] ອຸປາສົກເຫັນນຳວ່າ "ທ່ານກ່າວຈິງ ຍ້ອນເຮົາເຮັດຄຸນງາມຄວາມດີ ເຮັດທີ່ຕ້ານທານຄວາຢ້ານໄວ້ແລ້ວ ບໍ່ໄດ້ເຮັດຊົ່ວ ບໍ່ໄດ້ເຮັດບາບຫຍາບຊ້າທາລຸນອັນໃດໄວ້ ເຮົາສ້າງແຕ່ຄຸນງາມຄວາມດີ ບໍ່ສ້າງກຳຊົ່ວເລີຍ ຈະມີຊີວິດຢູ່ຢ່າງລຳບາກຍາກເຂັນໄປເຮັດຫຍັງ ເຮົາຕາຍສາດີກວ່າ ຫຼັງຈາກຕາຍແລ້ວ ຈັກໄປບັງເກີດໃນສຸກຄະຕິໂລກສະຫວັນ ຈັກເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ອັນເປັນທິບ" ຈຶ່ງກິນອາຫານທີ່ສະແຫຼງ ກິນຂອງສະແຫຼງ ຊິມຂອງສະແຫຼງ ດື່ມຂອງສະແຫຼງຈົນອາການເຈັບປ່ວຍໜັກຂຶ້ນຈົນເສຍຊີວິດ ພັນລະຍາຂອງອຸປາສົກນັ້ນຕຳໜິ ປະນາມໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ບໍ່ມີຄວາມລະອາຍ ທຸສິນ ມັກກ່າວ

ຕົວະ ແຕ່ກໍປະຕິນຍາຕົນວ່າ ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວຈິງ ມີສິນ ມີກັນ ລະຍານະທຳ ພວກທ່ານບໍ່ມີຄວາມເປັນສະມະນະຄວາມເປັນພາມ ຄວາມເປັນສະມະນະ ຄວາມເປັນພາມຂອງພວກທ່ານເສື່ອມສິ້ນໄປແລ້ວ ພວກທ່ານຈະເປັນສະມະນະຈະເປັນພາມໄດ້ແນວໃດ ພວກທ່ານປາສະຈາກຄວາມເປັນສະມະນະ ປາສະຈາກຄວາມເປັນພາມ ພວກທ່ານໄດ້ກ່າວພັນລະນາຄຸນແຫ່ງຄວາມຕາຍໃຫ້ສາມີຂອງເຮົາຟັງ ສາມີຂອງເຮົາຖືກພວກທ່ານຂ້າແລ້ວ" ແມ່ນພວກຊາວບ້ານອື່ນໆ ກໍຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ບໍ່ມີຄວາມລະອາຍ ຯລຯ ພວກທ່ານກ່າວພັນລະນາຄຸນຄວາມຕາຍໃຫ້ອຸປາສິກາຟັງ ອຸປາສິກາຖືກພວກທ່ານຂ້າແລ້ວ"

ພິກຂຸທັງຫຼາຍໄດ້ຍິນປະຊາຊົນ ຕຳໜິ ປະນາມ ໂພນທະນາ ບັນດາພິກຂຸ ຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງກ່າວພັນລະນາຄຸນຄວາມຕາຍໃຫ້ອຸປາສິກາຟັງນໍ"

## ຊົງປະຊຸມສົງບັນຍັດອະນຸບັນຍັດ

[໑໗໐] ລຳດັບນັ້ນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານກ່າວພັນລະນາຄຸນຄວາມຕາຍໃຫ້ອຸປາສິກາຟັງແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳຂອງພວກທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ເປັນຫຍັງ ພວກທ່ານ ຈຶ່ງກ່າວພັນລະນາຄຸນຄວາມຕາຍໃຫ້ອຸປາສິກາຟັງນໍ ໂມຄະບຸຣຸດທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໗໑] **ອັນໜຶ່ງ ພິກຂຸໃດ ຈົງໃຈພາກກາຍມະນຸດຈາກຊີວິດ ຫຼື ສະແຫວງຫາອາວຸດ ອັນຈະພາກກາຍມະນຸດນັ້ນ ກ່າວພັນລະນາຄຸນຄວາມຕາຍ ຫຼື ຊັກຊວນເພື່ອໃຫ້ຕາຍ ວ່າ "ທ່ານຜູ້ຈະເລີນ ຈະມີຊີວິດຢ່າງລຳບາກຍາກເຂັນນີ້ໄປເຮັດຫຍັງ ທ່ານຕາຍສາດີກວ່າ ດັ່ງນີ້" ທ່ານມີຈິດໃຈແນວນີ້ ມີດຳຣິໃນໃຈແນວນີ້ ກ່າວພັນລະນາຄຸນຄວາມຕາຍ ຫຼື ຊັກຊວນເພື່ອຄວາມຕາຍ ໂດຍປະການຕ່າງ ໆ ແມ່ນພິກຂຸນີ້ກໍເປັນປາຣາຊິກ ຫາສັງວາດບໍ່ໄດ້**

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໑໗໔] ຄຳວ່າ ອັນໜຶ່ງ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ໆລໆ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ຈົງໃຈ ໄດ້ແກ່ ຮູ້ຢູ່ ຮູ້ດີຢູ່ ຈົງໃຈ ຕັ້ງໃຈ ລ່ວງລະເມີດ

ທີ່ຊື່ວ່າ ກາຍມະນຸດ ໄດ້ແກ່ ຈິດດວງທຳອິດເກີດ ຄື ວິນຍານດວງທຳອິດຜາກົດຂຶ້ນໃນທ້ອງມານດາຈົນເຖິງເວລາຕາຍ ອັດຕະພາບໃນລະຫວ່າງນີ້ຊື່ວ່າ ກາຍມະນຸດ

ຄຳວ່າ ນຳຈາກຊີວິດ ໄດ້ແກ່ ຕັດທຳລາຍຊີວິຕິນຊຣີ ຕັດຄວາມສືບຕໍ່ແຫ່ງຊີວິດ

ຄຳວ່າ ສະແຫວງຫາອາວຸດອັນຈະພາກກາຍມະນຸດນັ້ນ ໄດ້ແກ່ ສະແຫວງຫາດາບ ຫອກງ້າວ ຫຼາວ ຄ້ອນ ຫີນ ມີດ ຢາພິດ ຫຼື ເຊືອກ ເປັນຕົ້ນ

ຄຳວ່າ ກ່າວພັນລະນາຄຸນຄວາມຕາຍ ໄດ້ແກ່ ສະແດງໂທດໃນຄວາມມີຊີວິດຢູ່ ພັນລະນາຄຸນຄວາມຕາຍ

ຄຳວ່າ ຊັກຊວນເພື່ອໃຫ້ຕາຍ ຄື ຊັກຊວນໃຫ້ນຳມີດມາ ໃຫ້ກິນຢາພິດ ຫຼື ໃຫ້ເອົາເຊືອກຜູກຄໍຈົນຕາຍ

ຄຳວ່າ ທ່ານຜູ້ຈະເລີນ ເປັນຄຳຮຽກ

ຄຳວ່າ ຈະມີຊີວິດຢ່າງລຳບາກຍາກເຂັນນີ້ໄປເຮັດຫຍັງ ທ່ານຕາຍສາດີກວ່າ ນັ້ນມີອະທິບາຍວ່າ ຊີວິດທີ່ຊື່ວ່າຍາກແຄ້ນ ຄື ທຽບຊີວິດຂອງຄົນມັ່ງຄັ່ງ ຊີວິດຂອງຄົນຂັດສົນ ກໍຊື່ວ່າຍາກແຄ້ນ ທຽບຊີວິດຂອງຄົນມີຊັບ ຊີວິດຂອງຄົນບໍ່ມີຊັບກໍຊື່ວ່າຍາກແຄ້ນ ທຽບຊີວິດຂອງພວກເທວະດາ ຊີວິດຂອງມະນຸດທັງຫຼາຍກໍຊື່ວ່າຍາກແຄ້ນ

ທີ່ຊື່ວ່າ ຊີວິດລຳບາກ ໄດ້ແກ່ ຊີວິດຄົນມືກຸດ ຕີນກຸດ ທັງມືແລະຕີນກຸດ ຫູແຫວ່ງ ດັງແຫວ່ງ ທັງຫູແຫວ່ງແລະດັງແຫວ່ງ ມີຊີວິດຢູ່ຢ່າງຍາກເຂັນເຊັ່ນນີ້ໄປເຮັດຫຍັງ ຕາຍສາດີກວ່າຢູ່

ຄຳວ່າ ມີຈິດໃຈແນວນີ້ ໄດ້ແກ່ ຈິດຄືໃຈ ໃຈຄືຈິດ

ຄຳວ່າ ມີດຳຣິໃນໃຈແນວນີ້ ຄື ມີຄວາມໝັ້ນໝາຍຈະໃຫ້ຕາຍ ມີເຈດຕະນາຈະໃຫ້ຕາຍ ມີຄວາມປະສົງຈະໃຫ້ຕາຍ

ຄຳວ່າ ໂດຍປະການຕ່າງ ໆ ຄື ໂດຍອາການສູງຕ່ຳ

ຄຳວ່າ ກ່າວພັນລະນາຄຸນຄວາມຕາຍ ໄດ້ແກ່ ສະແດງໂທດຂອງຊີວິດ ພັນລະນາຄຸນຄວາມຕາຍວ່າ ຫຼັງຈາກຕາຍແລ້ວ ທ່ານຈັກໄປບັງເກີດໃນສຸກຄະຕິໂລກສະຫວັນ ຈັກເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ອັນເປັນທິບໃນທີ່ນັ້ນ

ຄຳວ່າ ຊັກຊວນເພື່ອຄວາມຕາຍ ຄື ຊັກຊວນໃຫ້ນຳມີດມາ ໃຫ້ກິນຢາພິດ ໃຫ້ໃຊ້ເຊືອກຜູກຄໍຕາຍ ໃຫ້ໂດດລົງນຳສ້າງ ລົງເຫວ ຫຼື ຜາສູງ ປັນຕົ້ນ

ຄຳວ່າ ແມ່ນພິກຂຸນີ້ ພຣະຜູ້ມີພຣະພາກເຈົ້າ ຕັດທຽບຄຽງກັບພິກຂຸ ໔ ອົງທຳອິດ

ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກຂຸຜູ້ຈົງໃຈພາກກາຍມະນຸດອອກຈາກຊີວິດ ຍ່ອມບໍ່ເປັນສະມະນະບໍ່ເປັນເຊື້ອສາຍສາກະຍະບຸດ ປຽບເໝືອນແຜ່ນສິລາໜາແຕກອອກເປັນ ໔ ສ່ຽງຈະປະສານໃຫ້ຕິດເປັນກ້ອນດຽວກັນອີກບໍ່ໄດ້ ດັ່ງນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າ ສັງວາດ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນນີ້ຊື່ວ່າ ສັງວາດ ສັງວາດນັ້ນບໍ່ມີກັບພິກຂຸອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ບົດພາຊະນີ

## ມາຕິກາ

[໑໗໓] ເຮັດເອງ ຢືນຢູ່ໃກ້ ສັ່ງທູດ ສັ່ງທູດຕໍ່ ທູດບໍ່ສາມາດ ທູດໄປແລ້ວກັບມາ ທີ່ບໍ່ລັບສຳຄັນວ່າທີ່ລັບ ທີ່ລັບສຳຄັນວ່າທີ່ບໍ່ລັບ ທີ່ບໍ່ລັບສຳຄັນວ່າທີ່ບໍ່ລັບ ທີ່ລັບສຳຄັນວ່າທີ່ລັບ ພັນລະນາດ້ວຍກາຍ ພັນລະນາດ້ວຍວາຈາ ພັນລະນາດ້ວຍກາຍແລະວາຈາ ພັນລະນາດ້ວຍທູດ ພັນລະນາດ້ວຍສັດ ຂຸມພາງ ທີ່ອີງ ການລອບວາງ ເພສັດ ການນຳຮູບເຂົ້າໄປໃກ້ ການນຳສຽງເຂົ້າໄປໃກ້ ການນຳກິ່ນເຂົ້າໄປໃກ້ ການນຳຣົດເຂົ້າໄປໃກ້ ການນຳໂຜດຖັບພະເຂົ້າໄປໃກ້ ການນຳທຳມາຣົມເຂົ້າໄປໃກ້ ການບອກ ການແນະນຳ ການນັດໝາຍ ການເຮັດນິມິດ

## ເຮັດເອງ

[໑໗໔] ຄຳວ່າ ເຮັດເອງ ຄື ລົງມືຂ້າເອງດ້ວຍກາຍ ດ້ວຍເຄື່ອງປະຫານທີ່ເນື່ອງດ້ວຍກາຍ ຫຼືດ້ວຍເຄື່ອງປະຫານທີ່ຕ້ອງຊັດໄປຢືນຢູ່ໃກ້

ຄຳວ່າ ຢືນຢູ່ໃກ້ ຄື ຢືນສັ່ງຢູ່ທີ່ໃກ້ ໆ ວ່າ "ຈົ່ງແທງແນວນີ້ ຈົ່ງປະຫານແນວນີ້ ຈົ່ງຂ້າແນວນີ້"

## ສັ່ງທູດ

ພິກຂຸສັ່ງພິກຂຸວ່າ "ທ່ານຈົ່ງຂ້າຜູ້ຊື່ນີ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນ ຜູ້ນັ້ນວ່າເປັນຜູ້ນັ້ນ ຈຶ່ງຂ້າຜູ້ນັ້ນຕາຍ ຕ້ອງອາບັດປາຣາຊິກທັງ ໔ ອົງ

ພິກຂຸສັ່ງພິກຂຸວ່າ "ທ່ານຈົ່ງຂ້າຜູ້ຊື່ນີ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນ ຜູ້ນັ້ນວ່າເປັນຜູ້ນັ້ນ ແຕ່ຂ້າຜູ້ອື່ນຕາຍ ພິກຂຸຜູ້ສັ່ງບໍ່ຕ້ອງອາບັດ ພິກຂຸຜູ້ຂ້າຕ້ອງອາບັດປາຣາຊິກ

ພິກຂຸສັ່ງພິກຂຸວ່າ "ທ່ານຈົ່ງຂ້າຜູ້ຊື່ນີ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນ ຜູ້ນັ້ນວ່າເປັນຜູ້ອື່ນ ແຕ່ຂ້າຜູ້ນັ້ນ ຕ້ອງອາບັດປາຣາຊິກທັງ ໔ ອົງ

ພິກຂຸສັ່ງພິກຂຸວ່າ "ທ່ານຈົ່ງຂ້າຜູ້ຊື່ນີ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງສຳຄັນ ຜູ້ນັ້ນວ່າເປັນຜູ້ອື່ນ ແລະຂ້າຜູ້ອື່ນ ພິກຂຸຜູ້ສັ່ງບໍ່ຕ້ອງອາບັດ ພິກຂຸຜູ້ຂ້າຕ້ອງອາບັດປາຣາຊິກ

## ສັ່ງທູດຕໍ່

ພິກຂຸ (ຜູ້ເປັນອາຈານ) ສັ່ງພິກຂຸ (ຊື່ວ່າພຸດທະຣັກຂິຕະ) ວ່າ "ທ່ານຈົ່ງບອກພິກຂຸຊື່ (ທຳມະຣັກຂິຕະ) ນີ້ວ່າ ຈົ່ງບອກພິກຂຸຊື່ (ສັງຄະຣັກຂິຕະ) ນີ້ວ່າ ພິກຂຸຊື່ນີ້ຈົ່ງຂ້າບຸກຄົນນີ້" ດັ່ງນີ້ ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງໄປບອກພິກຂຸອີກອົງໜຶ່ງ ຕ້ອງອາບັດທຸກກົດ ພິກຂຸຜູ້ຂ້າຮັບຄຳສັ່ງ ພິກຂຸຜູ້ສັ່ງຄັ້ງທຳອິດ ຕ້ອງອາບັດຖຸນລັດໄຈ ພິກຂຸຜູ້ຂ້າແລ້ວຂ້າບຸກຄົນນັ້ນສຳເລັດ ຕ້ອງອາບັດປາຣາຊິກທຸກອົງ

ພິກຂຸ (ຜູ້ເປັນອາຈານ) ສັ່ງພິກຂຸ (ຊື່ພຸດທະຣັກຂິຕະ) ວ່າ "ທ່ານຈົ່ງບອກພິກຂຸຊື່ (ທຳມະຣັກຂິຕະ) ນີ້ວ່າ ຈົ່ງບອກພິກຂຸຊື່ (ສັງຄະຣັກຂິຕະ) ນີ້ວ່າ "ຈົ່ງຂ້າບຸກຄົນນີ້" ດັ່ງນີ້ ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງໄປບອກພິກຂຸອົງອື່ນ ຕ້ອງອາບັດທຸກກົດ ຜູ້ຂ້າຮັບຄຳສັ່ງ ຕ້ອງອາບັດທຸກກົດ ພິກຂຸຜູ້ຂ້າຂ້າບຸກຄົນນັ້ນສຳເລັດ ພິກຂຸຜູ້ສັ່ງຄັ້ງທຳອິດບໍ່ຕ້ອງອາບັດ ພິກຂຸຜູ້ສັ່ງຕໍ່ ແລະພິກຂຸຜູ້ຂ້າ ຕ້ອງອາບັດປາຣາຊິກ

## ທູດບໍ່ສາມາດ

ພິກຂຸສັ່ງພິກຂຸວ່າ "ຈົ່ງຂ້າບຸກຄົນຊື່ນີ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງໄປແລ້ວກັບມາບອກວ່າ "ຂ້ານ້ອຍບໍ່ສາມາດຂ້າຜູ້ນັ້ນໄດ້" ຜູ້ສັ່ງຈຶ່ງສັ່ງອີກວ່າ "ຈົ່ງຂ້າຜູ້ນັ້ນໃນເວລາທີ່ທ່ານສາມາດຈະຂ້າໄດ້" ຕ້ອງອາບັດທຸກກົດ ພິກຂຸຜູ້ຮັບຄຳສັ່ງຂ້າບຸກຄົນນັ້ນສຳເລັດ ຕ້ອງອາບັດປາຣາຊິກທັງ ໔ ອົງ

## ທູດໄປແລ້ວກັບມາ

ພິກຂຸສັ່ງພິກຂຸວ່າ "ຈົ່ງຂ້າບຸກຄົນຊື່ນີ້" ຕ້ອງອາບັດທຸກກົດ ທ່ານສັ່ງແລ້ວເກີດຄວາມເດືອດຮ້ອນໃຈ ແຕ່ບໍ່ໄດ້ກ່າວໃຫ້ຜູ້ຮັບຄຳສັ່ງໄດ້ຍິນວ່າ "ຢ່າຂ້າ" ພິກຂຸຜູ້ຮັບຄຳສັ່ງຂ້າບຸກຄົນນັ້ນສຳເລັດ ຕ້ອງອາບັດປາຣາຊິກທັງ ໔ ອົງ

ພິກຂຸສັ່ງພິກຂຸວ່າ "ຈົ່ງຂ້າບຸກຄົນຊື່ນີ້" ຕ້ອງອາບັດທຸກກົດ ທ່ານສັ່ງແລ້ວເກີດຄວາມເດືອດຮ້ອນໃຈຈຶ່ງກ່າວໃຫ້ຜູ້ຮັບຄຳສັ່ງໄດ້ຍິນວ່າ "ຢ່າຂ້າ" ແຕ່ພິກຂຸຜູ້ຮັບຄຳສັ່ງກ່າວວ່າ "ທ່ານສັ່ງເຮົາແລ້ວ" ຂ້າບຸກຄົນນັ້ນ ພິກຂຸຜູ້ສັ່ງບໍ່ຕ້ອງອາບັດ ພິກຂຸຜູ້ຂ້າ ຕ້ອງອາບັດປາຣາຊິກ

ພິກຂຸສັ່ງພິກຂຸວ່າ "ຈົ່ງຂ້າບຸກຄົນຊື່ນີ້" ຕ້ອງອາບັດທຸກກົດ ທ່ານສັ່ງແລ້ວເກີດຄວາມເດືອດຮ້ອນໃຈຈຶ່ງກ່າວໃຫ້ຜູ້ຮັບຄຳສັ່ງໄດ້ຍິນວ່າ "ຢ່າຂ້າ" ພິກຂຸຜູ້ຮັບຄຳສັ່ງນັ້ນຮັບວ່າ "ດີແລ້ວ" ຈຶ່ງງົດເວັ້ນ ບໍ່ຕ້ອງອາບັດທັງ ໒ ອົງ

## ທີ່ບໍ່ລັບ ສຳຄັນວ່າທີ່ລັບ

[໑໗໕] ທີ່ບໍ່ລັບ ພິກຂຸສຳຄັນວ່າທີ່ລັບ ກ່າວຂຶ້ນວ່າ "ເຮັດແນວໃດ ບຸກຄົນຊື່ນີ້ຈະຖືກຂ້າ" ຕ້ອງອາບັດທຸກກົດ

## ທີ່ລັບ ສຳຄັນວ່າທີ່ບໍ່ລັບ

ທີ່ລັບ ພິກຂຸສຳຄັນວ່າທີ່ບໍ່ລັບ ກ່າວຂຶ້ນວ່າ "ເຮັດແນວໃດ ບຸກຄົນຊື່ນີ້ຈະຖືກຂ້າ" ຕ້ອງອາບັດທຸກກົດ

## ທີ່ບໍ່ລັບ ສຳຄັນວ່າທີ່ບໍ່ລັບ

ທີ່ບໍ່ລັບ ພິກຂຸສຳຄັນວ່າທີ່ບໍ່ລັບ ກ່າວຂຶ້ນວ່າ "ເຮັດແນວໃດ ບຸກຄົນຊື່ນີ້ຈະຖືກຂ້າ" ຕ້ອງອາບັດທຸກກົດ

## ທີ່ລັບ ສຳຄັນວ່າທີ່ລັບ

ທີ່ລັບ ພິກຂຸສຳຄັນວ່າທີ່ລັບ ກ່າວຂຶ້ນວ່າ "ເຮັດແນວໃດ ບຸກຄົນຊື່ນີ້ຈະຖືກຂ້າ" ຕ້ອງອາບັດທຸກກົດ

## ພັນລະນາດ້ວຍກາຍ

ທີ່ຊື່ວ່າ ພັນລະນາດ້ວຍກາຍ ໄດ້ແກ່ ພິກຂຸສະແດງອາການຕ່າງ ໆ ດ້ວຍກາຍເປັນເຫດໃຫ້ຮູ້ວ່າ "ຜູ້ໃດຕາຍແນວນີ້ ຜູ້ນັ້ນຈະໄດ້ຊັບ ໄດ້ຍົດ ຫຼື ໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ມີຜູ້ໃດຜູ້ໜຶ່ງຄິດຈະຕາຍແລ້ວເຮັດໃຫ້ເກີດທຸກຂະເວທະນາຕາມການພັນລະນານັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ພັນລະນາດ້ວຍວາຈາ

ທີ່ຊື່ວ່າ ພັນລະນາດ້ວຍວາຈາ ໄດ້ແກ່ ພິກຂຸກ່າວດ້ວຍວາຈາວ່າ "ຜູ້ໃດຕາຍແນວນີ້ ຜູ້ນັ້ນຈະໄດ້ຊັບ ໄດ້ຍົດ ຫຼື ໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ມີຜູ້ໃດຜູ້ໜຶ່ງຄິດຈະຕາຍແລ້ວ

ເຮັດໃຫ້ເກີດທຸກຂະເວທະນາຕາມການພັນລະນານັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ພັນລະນາດ້ວຍກາຍແລະວາຈາ

ທີ່ຊື່ວ່າ ພັນລະນາດ້ວຍກາຍແລະວາຈາ ໄດ້ແກ່ ພິກຂຸສະແດງອາການຕ່າງ ໆ ດ້ວຍກາຍແລະກ່າວດ້ວຍວາຈາວ່າ "ຜູ້ໃດຕາຍແບບນີ້ ຜູ້ນັ້ນຈະໄດ້ຊັບ ໄດ້ຍົດ ຫຼື ໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ມີຜູ້ໃດຜູ້ໜຶ່ງຄິດຈະຕາຍ ຫຼື ເຮັດໃຫ້ເກີດທຸກຂະເວທະນາຕາມການພັນລະນານັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ພັນລະນາດ້ວຍທູດ

ທີ່ຊື່ວ່າ ພັນລະນາດ້ວຍທູດ ໄດ້ແກ່ ພິກຂຸສັ່ງທູດວ່າ "ຜູ້ໃດຕາຍແບບນີ້ ຜູ້ນັ້ນຈະໄດ້ຊັບ ໄດ້ຍົດ ຫຼື ໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ມີຜູ້ໃດຜູ້ໜຶ່ງຟັງສານຂອງທູດແລ້ວຄິດຈະຕາຍ ເຮັດໃຫ້ເກີດທຸກຂະເວທະນາຕາມການພັນລະນານັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ພັນລະນາດ້ວຍໜັງສື

[໑໗໙] ທີ່ຊື່ວ່າ ພັນລະນາດ້ວຍໜັງສື ໄດ້ແກ່ ພິກຂຸຂຽນໜັງສືວ່າ "ຜູ້ໃດຕາຍແບບນີ້ ຜູ້ນັ້ນຈະໄດ້ຊັບ ໄດ້ຍົດ ຫຼືໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ທຸກຕົວອັກສອນ ຜູ້ໃດຜູ້ໜຶ່ງເຫັນໜັງສືຄິດຈະຕາຍແລ້ວເຮັດໃຫ້ເກີດທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ຂຸມພາງ

ທີ່ຊື່ວ່າ ຂຸມພາງ ໄດ້ແກ່ ພິກຂຸຂຸດຂຸມພາງໄວ້ເຈາະຈົງມະນຸດວ່າ "ບຸກຄົນຊື່ນີ້ຈະຕົກລົງໄປຕາຍ" ຕ້ອງອາບັດທຸກກົດ ເມື່ອບຸກຄົນຊື່ນັ້ນຕົກລົງໄປໄດ້ຮັບທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸຂຸດຂຸມພາງໄວ້ບໍ່ເຈາະຈົງດ້ວຍຄິດວ່າ "ໃຜກໍໄດ້ຈະຕົກລົງໄປຕາຍ" ຕ້ອງອາບັດທຸກກົດ ມະນຸດຕົກລົງໄປໃນຂຸມນັ້ນ ພິກຂຸຜູ້ຂຸດຕ້ອງອາບັດທຸກກົດ ເມື່ອມະນຸດຕົກລົງໄປແລ້ວໄດ້ຮັບທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ຍັກ ເຜດ ຫຼື ສັດດີຣັດສານມີກາຍເປັນມະນຸດ ຕົກລົງໄປໃນຂຸມນັ້ນ ຕ້ອງອາບັດທຸກກົດ ເມື່ອຕົກລົງໄປແລ້ວໄດ້ຮັບທຸກຂະເວທະນາ ຕ້ອງອາບັດທຸກກົດ ຍັກເປັນຕົ້ນນັ້ນຕາຍ ຕ້ອງອາບັດຖຸນລັດໄຈ ສັດເດຍຣັດສານ ຕົກລົງໄປໃນຂຸມນັ້ນ ຕ້ອງອາບັດທຸກກົດ ເມື່ອຕົກລົງໄປແລ້ວໄດ້ຮັບທຸກຂະເວທະນາ ຕ້ອງອາບັດທຸກກົດ ສັດເດຍຣັດສານຕາຍ ຕ້ອງອາບັດປາຈິດຕີ

## ທີ່ອີງ

[໑໗໗] ທີ່ຊື່ວ່າ ທີ່ອີງ ໄດ້ແກ່ ພິກຂຸວາງອາວຸດໄວ້ໃນທີ່ອີງ ຫຼື ທາຢາພິດ ເຮັດໃຫ້ເສຍຫາຍ ຫຼືວາງໄວ້ແຄມນຳສ້າງ ເຫວ ຫຼື ທີ່ລາດຊັນດ້ວຍໝາຍໃຈວ່າ ຈະມີຜູ້ຕົກລົງໄປຕາຍດ້ວຍວິທີນີ້ ຕ້ອງອາບັດທຸກກົດ ມີຜູ້ໄດ້ຮັບທຸກຂະເວທະນາ ຍ້ອນຖືກອາວຸດ ຖືກຢາພິດ ຫຼື ຕົກລົງໄປ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການລອບວາງ

ທີ່ຊື່ວ່າ ການລອບວາງ ໄດ້ແກ່ ພິກຂຸວາງດາບ ຫອກ ງ້າວ ຫຼາວ ໄມ້ຄ້ອນ ຫີນ ມີດ ຢາພິດ ຫຼື ເຊືອກໄວ້ໃກ້ ໆ ດ້ວຍຕັ້ງໃຈວ່າ ຈະມີຜູ້ຕາຍດ້ວຍຂອງສິ່ງນີ້ ຕ້ອງອາບັດທຸກກົດ ມີຜູ້ຄິດວ່າ ເຮົາຈະຕາຍ ແລ້ວຍັງທຸກຂະເວທະນາໃຫ້ເກີດດ້ວຍສິ່ງຂອງນັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ເພສັດ

ທີ່ຊື່ວ່າ ເພສັດ ໄດ້ແກ່ ພິກຂຸໃຫ້ເນີຍໄສ ເນີຍຂຸ້ນ ນ້ຳມັນ ນ້ຳເຜີ້ງ ຫຼື ນ້ຳອ້ອຍ ດ້ວຍຕັ້ງໃຈວ່າ ເຂົາຊີມເພສັດນີ້ແລ້ວຈະຕາຍ ຕ້ອງອາບັດທຸກກົດ ເມື່ອເຂົາຊີມເພສັດນັ້ນແລ້ວໄດ້ຮັບທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນຳຮູບເຂົ້າໄປໃກ້

[໑໗໘] ທີ່ຊື່ວ່າ ນຳຮູບເຂົ້າໄປໃກ້ ໄດ້ແກ່ ພິກຂຸນຳຮູບທີ່ບໍ່ໜ້າພໍໃຈ ເປັນຕາຢ້ານ ໜ້າຫວາດສຽວເຂົ້າໄປໃກ້ດ້ວຍຕັ້ງໃຈວ່າ ເຂົາເຫັນຮູບນີ້ແລ້ວຈະຕົກໃຈຕາຍ ຕ້ອງອາບັດທຸກກົດ ເຂົາເຫັນຮູບນັ້ນແລ້ວຕົກໃຈ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸນຳຮູບທີ່ໜ້າພໍໃຈ ໜ້າຮັກ ໜ້າຈັບໃຈເຂົ້າໄປໃກ້ດ້ວຍຕັ້ງໃຈວ່າ ເຂົາເຫັນຮູບນີ້ແລ້ວຈະຈ່ອຍຜອມຕາຍໄປ ຍ້ອນບໍ່ໄດ້ (ຮູບນັ້ນ) ຕ້ອງອາບັດທຸກກົດ ເຂົາເຫັນຮູບນັ້ນແລ້ວຈ່ອຍຜອມຍ້ອນບໍ່ໄດ້ (ຮູບນັ້ນ) ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນຳສຽງເຂົ້າໄປໃກ້

ທີ່ຊື່ວ່າ ນຳສຽງເຂົ້າໄປໃກ້ ໄດ້ແກ່ ພິກຂຸນຳສຽງທີ່ບໍ່ໜ້າພໍໃຈ ເປັນຕາຢ້ານ ໜ້າຫວາດສຽວເຂົ້າໄປໃກ້ ດ້ວຍຕັ້ງໃຈວ່າ ເຂົາຟັງສຽງນີ້ແລ້ວຈະຕົກໃຈຕາຍ ຕ້ອງອາບັດທຸກກົດ ເຂົາໄດ້ຍິນສຽງນັ້ນແລ້ວຕົກໃຈ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸນຳສຽງທີ່ໜ້າພໍໃຈ ມ່ວນຈັບໃຈ ເຂົ້າໄປໃກ້ດ້ວຍຕັ້ງໃຈວ່າ ເຂົາຟັງສຽງນີ້ແລ້ວ ຈະຈ່ອຍຜອມຕາຍໄປ ຍ້ອນບໍ່ໄດ້ (ສຽງນັ້ນ) ຕ້ອງອາບັດທຸກກົດ ເຂົາເຫັນອີງນັ້ນແລ້ວ ຊູບຜອມຍ້ອນບໍ່ໄດ້(ສຽງນັ້ນ) ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນຳກິ່ນເຂົ້າໄປໃກ້

ທີ່ຊື່ວ່າ ນຳກິ່ນເຂົ້າໄປໃກ້ ໄດ້ແກ່ ພິກຂຸນຳກິ່ນທີ່ບໍ່ໜ້າພໍໃຈ ໜ້າລັງກຽດ ໜ້າປວດຮາກເຂົ້າໄປໃກ້ດ້ວຍຕັ້ງໃຈວ່າ ເຂົາສູບດົມກິ່ນນີ້ແລ້ວຈະຕາຍໄປ ຍ້ອນລັງກຽດ ຍ້ອນປວດຮາກ ຕ້ອງອາບັດທຸກກົດ ເຂົາສູບດົມກິ່ນແລ້ວເກີດທຸກຂະເວທະນາຍ້ອນລັງກຽດ ຍ້ອນປວດຮາກ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸນຳກິ່ນທີ່ໜ້າພໍໃຈ ເຂົ້າໄປໃກ້ ດ້ວຍຕັ້ງໃຈວ່າ ເຂົາສູບດົມກິ່ນນີ້ແລ້ວ ຈະຈ່ອຍຜອມຕາຍໄປ ຍ້ອນບໍ່ໄດ້ (ກິ່ນນັ້ນ) ຕ້ອງອາບັດທຸກກົດ ເຂົາເຫັນອີງນັ້ນແລ້ວຈ່ອຍຜອມຍ້ອນບໍ່ໄດ້ (ກິ່ນນັ້ນ) ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນຳຣົດເຂົ້າໄປໃກ້

ທີ່ຊື່ວ່າ ການນຳຣົດເຂົ້າໄປໃກ້ ໄດ້ແກ່ ພິກຂຸນຳຣົດທີ່ບໍ່ໜ້າພໍໃຈ ໜ້າລັງກຽດ ໜ້າສະອິດສະອຽນ ເຂົ້າໄປໃກ້ ດ້ວຍຕັ້ງໃຈວ່າ ເຂົາຊີມຣົດນີ້ແລ້ວຈະຕາຍ ຍ້ອນລັງກຽດ ຍ້ອນສະອິດສະອຽນ ຕ້ອງອາບັດທຸກກົດ ເມື່ອເຂົາໄດ້ຊີມຣົດນັ້ນແລ້ວ ຍັງທຸກຂະເວທະນາໃຫ້ເກີດ ຍ້ອນລັງກຽດ ຍ້ອນສະອິດສະອຽນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸນຳຣົດທີ່ໜ້າພໍໃຈເຂົ້າໄປໃກ້ ດ້ວຍຕັ້ງໃຈວ່າ ເຂົາຊີມຣົດນີ້ແລ້ວຈະຈ່ອຍຜອມຕາຍຍ້ອນບໍ່ໄດ້ (ຣົດນັ້ນ) ຕ້ອງອາບັດທຸກກົດ ເຂົາເຫັນຮູບນັ້ນແລ້ວຈ່ອຍຜອມຍ້ອນບໍ່ໄດ້ (ຣົດນັ້ນ) ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນຳໂຜດຖັບພະເຂົ້າໄປໃກ້

ທີ່ຊື່ວ່າ ການນຳໂຜດຖັບພະເຂົ້າໄປໃກ້ ໄດ້ແກ່ ພິກຂຸນຳໂຜດຖັບພະທີ່ບໍ່ໜ້າພໍໃຈ ມີສຳຜັດບໍ່ສະບາຍ ແລະ ແຂງກະດ້າງເຂົ້າໄປໃກ້ ດ້ວຍຕັ້ງໃຈວ່າ ເຂົາຈັບຕ້ອງສິ່ງນີ້ແລ້ວຈະຕາຍ

ຕ້ອງອາບັດທຸກກົດ ເມື່ອເຂົາຈັບຕ້ອງສິ່ງນັ້ນແລ້ວເກີດທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸນຳໂພດຖັບພະທີ່ໜ້າພໍໃຈ ມີສຳຜັດສະບາຍ ອ່ອນນຸ້ມ ເຂົ້າໄປໃກ້ ດ້ວຍຕັ້ງໃຈວ່າ ເຂົາຈັບຕ້ອງສິ່ງນີ້ແລ້ວ ຈະຈ່ອຍຜອມຕາຍຍ້ອນບໍ່ໄດ້ (ໂພດຖັບພະນັ້ນ) ຕ້ອງອາບັດທຸກກົດ ເຂົາຖືກສິ່ງນັ້ນແລ້ວ ຈ່ອຍຜອມຍ້ອນບໍ່ໄດ້ (ໂພດຖັບພະນັ້ນ) ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນຳທຳມາຣົມເຂົ້າໄປໃກ້

ທີ່ຊື່ວ່າ ການນຳທຳມາຣົມເຂົ້າໄປໃກ້ ໄດ້ແກ່ ພິກຂຸສະແດງເລື້ອງນະຮົກແກ່ຄົນຜູ້ຄວນຈະເກີດໃນນະຮົກດ້ວຍຕັ້ງໃຈວ່າ ເຂົາຟັງເລື້ອງນະຮົກນີ້ແລ້ວ ຈະຕົກໃຈຕາຍ ຕ້ອງອາບັດທຸກກົດ ເຂົາຟັງເລື້ອງນັ້ນແລ້ວ ຕົກໃຈ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸສະແດງເລື້ອງສະຫວັນແກ່ບຸກຄົນຜູ້ກະທຳຄວາມດີ ດ້ວຍຕັ້ງໃຈວ່າ ເຂົາຟັງເລື້ອງນີ້ແລ້ວ ຈະສະໝັກໃຈຕາຍ ຕ້ອງອາບັດທຸກກົດ ເຂົາຟັງເລື້ອງນັ້ນແລ້ວ ຄິດວ່າ ເຮົາຈະຍອມຕາຍແລ້ວເຮັດທຸກຂະເວທະນາໃຫ້ເກີດຂຶ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການບອກ

[໑໗໙] ທີ່ຊື່ວ່າ ການບອກ ໄດ້ແກ່ ພິກຂຸຖືກຖາມແລ້ວບອກວ່າ "ທ່ານຈົ່ງຕາຍແນວນີ້ ຜູ້ຕາຍແນວນີ້ຈະໄດ້ຊັບ ໄດ້ຍົດ ຫຼື ໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ເຂົາ ຄິດວ່າ ຈະຕາຍແລ້ວຍັງທຸກຂະເວທະນາໃຫ້ເກີດຕາມການບອກນັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການແນະນຳ

ທີ່ຊື່ວ່າ ການແນະນຳ ໄດ້ແກ່ ພິກຂຸທີ່ເຂົາບໍ່ໄດ້ຖາມແຕ່ແນະນຳໃຫ້ເຂົາຕາຍວ່າ "ທ່ານຈົ່ງຕາຍແນວນີ້ ຜູ້ຕາຍແນວນີ້ຈະໄດ້ຊັບ ໄດ້ຍົດ ຫຼື ໄດ້ໄປສະຫວັນ" ຕ້ອງອາບັດທຸກກົດ ເຂົາຄິດວ່າ "ຈະຕາຍ" ແລ້ວຍັງທຸກຂະເວທະນາໃຫ້ເກີດຕາມການແນະນຳນັ້ນ ຕ້ອງອາບັດຖຸນລັດໄຈ ເຂົາຕາຍ ຕ້ອງອາບັດປາຣາຊິກ

## ການນັດໝາຍ

ທີ່ຊື່ວ່າ ການນັດໝາຍ ໄດ້ແກ່ ພິກຂຸທຳການນັດໝາຍວ່າ "ຈົ່ງຂ້າເຂົາ ຕາມເວລານັດໝາຍນັ້ນ ຄື ໃນເວລາກ່ອນອາຫານ ຫຼື ໃນເວລາຫຼັງອາຫານ ໃນເວລາກາງຄືນ ຫຼື ໃນເວລາກາງ

ເວັນ" ຕ້ອງອາບັດທຸກກົດ ຜູ້ຮັບຄຳສັ່ງຂ້າເຂົາສຳເລັດຕາມເວລານັດໝາຍນັ້ນ ຕ້ອງອາບັດປາຣາຊິກທັງ ໒ ອົງ ຂ້າເຂົາໄດ້ກ່ອນ ຫຼື ຫຼັງເວລານັດໝາຍນັ້ນ ຜູ້ນັດໝາຍ ບໍ່ຕ້ອງອາບັດ ຜູ້ຂ້າຕ້ອງອາບັດປາຣາຊິກ

## ການເຮັດນິມິດ

ທີ່ຊື່ວ່າ ການເຮັດນິມິດ ໄດ້ແກ່ ພິກຂຸເຮັດນິມິດວ່າ "ເຮົາຈັກກະພິບຕາ ຍັກຄິ້ວ ຫຼື ງຶກຫົວ ທ່ານຈົ່ງຂ້າເຂົາຕາມທີ່ເຮົາເຮັດນິມິດນັ້ນ" ຕ້ອງອາບັດທຸກກົດ ຜູ້ຮັບສັນຍານ ຂ້າເຂົາສຳເລັດຕາມນິມິດນັ້ນ ຕ້ອງອາບັດປາຣາຊິກທັງ ໒ ອົງ ຂ້າເຂົາໄດ້ກ່ອນ ຫຼື ຫຼັງການເຮັດນິມິດນັ້ນ ຜູ້ເຮັດນິມິດບໍ່ຕ້ອງອາບັດ ຜູ້ຂ້າຕ້ອງອາບັດປາຣາຊິກ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ຮູ້
໓. ພິກຂຸບໍ່ມີຄວາມປະສົງຈະຂ້າ
໔. ພິກຂຸວິກົນຈະລິດ
໕. ພິກຂຸມີຈິດຟຸ້ງຊ່ານ
໖. ພິກຂຸກະສັບກະສ່າຍຍ້ອນເວທະນາ
໗. ພິກຂຸຕົ້ນບັນຍັດ

**ປະຖົມພານະວານ ໃນມະນຸດສະວິກຄະຫະປາຣາຊິກ ຈົບ**

## ຄາຖາລວມວິນີຕະວັດຖຸ

## ເລື້ອງທີ່ຊົງວິນິດໄສແລ້ວ

| | | | |
|---|---|---|---|
| ເລື້ອງພັນລະນາຄຸນຄວາມຕາຍ | ໑ ເລື້ອງ | ເລື້ອງນັ່ງ | ໑ ເລື້ອງ |
| ເລື້ອງສາກ | ໑ ເລື້ອງ | ເລື້ອງໄມ້ສຳລັບເຮັດຄົກ | ໑ ເລື້ອງ |
| ເລື້ອງພຣະຜູ້ເຖົ້າ | ໓ ເລື້ອງ | ເລື້ອງຊີ້ນຕິດຄໍ | ໓ ເລື້ອງ |
| ເລື້ອງຢາພິດ | ໒ ເລື້ອງ | ເລື້ອງກຽມພື້ນທີ່ສ້າງວິຫານ | ໓ ເລື້ອງ |
| ເລື້ອງດິນຈີ່ | ໓ ເລື້ອງ | ເລື້ອງມີດ | ໓ ເລື້ອງ |
| ເລື້ອງໄມ້ກອນ | ໓ ເລື້ອງ | ເລື້ອງຄາດຫ້າງ | ໓ ເລື້ອງ |

| | |
|---|---|
| ເລື້ອງໃຫ້ລົງຈາກຫຼັງຄາ ໓ ເລື້ອງ | ເລື້ອງໂຕນໜ້າຜາ ໘ ເລື້ອງ |
| ເລື້ອງໂຮມຢາ ໓ ເລື້ອງ | ເລື້ອງມັດຢາ ໓ ເລື້ອງ |
| ເລື້ອງບີບນວດ ໓ ເລື້ອງ | ເລື້ອງໃຫ້ອາບນ້ຳ ໓ ເລື້ອງ |
| ເລື້ອງໃຫ້ທານ້ຳມັນ ໓ ເລື້ອງ | ເລື້ອງໃຫ້ລຸກຂຶ້ນ ໓ ເລື້ອງ |
| ເລື້ອງເຮັດໃຫ້ລົ້ມ ໓ ເລື້ອງ | ເລື້ອງໃຫ້ຕາຍດ້ວຍເຂົ້າ ໓ ເລື້ອງ |
| ເລື້ອງໃຫ້ຕາຍດ້ວຍນ້ຳສົ້ມ ໓ ເລື້ອງ | ເລື້ອງແມ່ຍິງຖືພາກັບຊາຍຊູ້ ໑ ເລື້ອງ |
| ເລື້ອງແມ່ຍິງຮ່ວມສາມີ ໘ ເລື້ອງ | ເລື້ອງນາບທ້ອງໃຫ້ຮ້ອນ ໑ ເລື້ອງ |
| ເລື້ອງຂ້ານານດາແລະບຸດທັງ ໘ ຄົນຕາຍ ໑ ເລື້ອງ | |
| ເລື້ອງຂ້ານານດາແລະບຸດທັງ ໘ ຄົນບໍ່ຕາຍ ໑ ເລື້ອງ | |
| ເລື້ອງໃຫ້ຮີດອອກ ໑ ເລື້ອງ | ເລື້ອງແມ່ຍິງເປັນໝັນ ໑ ເລື້ອງ |
| ເລື້ອງແມ່ຍິງບໍ່ເປັນໝັນ ໑ ເລື້ອງ | ເລື້ອງຈີ້ ໑ ເລື້ອງ |
| ເລື້ອງເຕັງ ໑ ເລື້ອງ | ເລື້ອງຂ້າຍັກ ໑ ເລື້ອງ |
| ເລື້ອງສົ່ງໄປສູ່ທີ່ມີສັດຮ້າຍແລະຍັກຮ້າຍ ໗ ເລື້ອງ | ເລື້ອງສຳຄັນວ່າແມ່ນ ໔ ເລື້ອງ |
| ເລື້ອງປະຫານ ໓ ເລື້ອງ | ເລື້ອງພັນລະນາສະຫວັນ ໓ ເລື້ອງ |
| ເລື້ອງພັນລະນານະຮົກ ໓ ເລື້ອງ | |
| ເລື້ອງຕົ້ນໄມ້ທີ່ເມືອງອາລະວີ ໓ ເລື້ອງ | ເລື້ອງຈູດປ່າ ໓ ເລື້ອງ |
| ເລື້ອງບໍ່ໃຫ້ລຳບາກ ໑ ເລື້ອງ | ເລື້ອງບໍ່ເຮັດຕາມທ່ານ ໑ ເລື້ອງ |
| ເລື້ອງໃຫ້ດື່ມນ້ຳມັນ ໑ ເລື້ອງ | |
| ເລື້ອງໃຫ້ດື່ມຢາໂລນະໂສວີຣະກະ ໑ ເລື້ອງ | |

## ວິນີຕະວັດຖຸ

## ເລື້ອງພັນລະນາຄຸນຄວາມຕາຍ ໑ ເລື້ອງ

[໑໙໐] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍໄດ້ພັນລະນາຄຸນແຫ່ງຄວາມຕາຍໃຫ້ທ່ານຟັງດ້ວຍຄວາມສົງສານ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑)

## ເລື້ອງນັ່ງ ໑ ເລື້ອງ

ສະໄໝນັ້ນ ພິກຂຸຜູ້ທ່ຽວບິນທະບາດເປັນວັດອົງໜຶ່ງ ນັ່ງເຕັງເດັກຊາຍທີ່ເຂົາໃຊ້ຜ້າເກົ່າຄຸມໄວ້ເທິງຕັ່ງ ເຮັດໃຫ້ເດັກນັ້ນຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກ

ແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸຍັງບໍ່ໄດ້ພິຈາລະນາແລ້ວບໍ່ເພິ່ງນັ່ງ ເທິງອາສະນະ ພິກຂຸໃດນັ່ງ ຕ້ອງອາບັດທຸກກົດ" (ເລື້ອງທີ ໔)

## ເລື້ອງສາກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງປູລາດອາສະນະທີ່ໂຮງອາຫານໃນບໍລິເວນບ້ານ ໄດ້ຈັບສາກອັນໜຶ່ງໃນສາກທີ່ເຂົາອິງໄວ້ ສາກອັນທີ່ສອງລົ້ມຟາດໃສ່ຫົວເດັກຊາຍຄົນໜຶ່ງຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ໄດ້ຈົງໃຈ ຂ້ານ້ອຍ" "ພິກຂຸ ທ່ານບໍ່ໄດ້ຈົງໃຈ ບໍ່ຕ້ອງອາບັດ" (ເລື້ອງທີ ໑)

## ເລື້ອງໄມ້ສໍາລັບເຮັດຄົກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງປູລາດອາສະນະທີ່ໂຮງອາຫານໃນບໍລິເວນບ້ານ ຢຽບຂອນໄມ້ທີ່ເຂົານໍາມາເຮັດຄົກກິ້ງໄປໃສ່ທັບເດັກຊາຍຄົນໜຶ່ງເຖິງຕາຍ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ໄດ້ຈົງໃຈ ຂ້ານ້ອຍ" "ພິກຂຸ ທ່ານບໍ່ໄດ້ຈົງໃຈ ບໍ່ຕ້ອງອາບັດ" (ເລື້ອງທີ ໔)

## ເລື້ອງພຣະຜູ້ເຖົ້າ ໑ ເລື້ອງ

ສະໄໝນັ້ນ ບິດາແລະບຸດບວດໃນສໍານັກພິກຂຸ ວັນໜຶ່ງເມື່ອເຂົາບອກເວລາອາຫານ ພິກຂຸຜູ້ເປັນບຸດໄດ້ກ່າວກັບພິກຂຸຜູ້ເປັນບິດາວ່າ "ນິມົນໄປເທີ້ນ ພຣະສົງກໍາລັງຖ້າທ່ານຢູ່" ແລ້ວຍູ້ຫຼັງຊຸກໄປຈົນພິກຂຸຜູ້ເປັນບິດາລົ້ມລົງເຖິງແກ່ມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໕)

ສະໄໝນັ້ນ ບິດາແລະບຸດບວດໃນສໍານັກພິກຂຸ ວັນໜຶ່ງເມື່ອເຂົາບອກເວລາອາຫານ ພິກຂຸຜູ້ເປັນບຸດໄດ້ກ່າວກັບພິກຂຸຜູ້ເປັນບິດາວ່າ "ນິມົນໄປເທີ້ນ ພຣະສົງກໍາລັງຖ້າທ່ານຢູ່" ມີຄວາມປະສົງຈະຂ້າຈຶ່ງຍູ້ຫຼັງຊຸກໄປ ພິກຂຸຜູ້ເປັນບິດາລົ້ມລົງ ເຖິງແກ່ມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກ

ເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໖)

ສະໄໝນັ້ນ ບິດາແລະບຸດບວດໃນສຳນັກພິກຂຸ ວັນໜຶ່ງເມື່ອເຂົາບອກເວລາອາຫານ ພິກຂຸຜູ້ເປັນບຸດໄດ້ກ່າວກັບພິກຂຸຜູ້ເປັນບິດາວ່າ "ນິມົນໄປເທີ້ນ ພຣະສົງກຳລັງຖ້າທ່ານຢູ່" ມີຄວາມປະສົງຈະຂ້າຈຶ່ງຍູ້ຫຼັງຊຸກໄປ ພິກຂຸຜູ້ເປັນບິດາລົ້ມລົງແຕ່ບໍ່ເຖິງມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗)

## ເລື້ອງຊີ້ນຕິດຄໍ ໓ ເລື້ອງ

[໑໗໑] ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງສັນອາຫານ ຊີ້ນຕິດຄໍ ເພື່ອນອີກອົງໜຶ່ງໄດ້ທຸບໃສ່ຄໍຂອງພິກຂຸອົງນັ້ນ ຊີ້ນໄດ້ລຸດອອກມາພ້ອມກັບເລືອດ ທ່ານເຖິງແກ່ມໍຣະນະພາບ ພິກຂຸອົງທີ່ທຸບເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘)

ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງສັນອາຫານ ຊີ້ນຕິດຄໍ ພິກຂຸອີກອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງໄດ້ທຸບທີ່ຄໍ ຊີ້ນລຸດອອກມາພ້ອມກັບເລືອດ ທ່ານເຖິງແກ່ມໍຣະນະພາບ ພິກຂຸອົງທີ່ທຸບເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙)

ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງສັນອາຫານ ຊີ້ນຕິດຄໍ ພິກຂຸອີກອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງໄດ້ທຸບໃສ່ຄໍ ຊີ້ນລຸດອອກມາພ້ອມກັບເລືອດ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸອົງທີ່ທຸບເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໐)

## ເລື້ອງຢາພິດ ໘ ເລື້ອງ

ສະໄໝນັ້ນ ພິກຂຸຜູ້ທ່ຽວບິນທະບາດເປັນວັດອົງໜຶ່ງໄດ້ອາຫານບິນທະບາດທີ່ປົນຢາພິດມາແລ້ວນຳກັບໄປຖວາຍແກ່ພິກຂຸທັງຫຼາຍໃຫ້ສັນກ່ອນ ພິກຂຸເຫຼົ່ານັ້ນເຖິງແກ່ມໍຣະນະພາບ ພິກຂຸ

ເຈົ້າຂອງບິນທະບາດເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ຮູ້ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຮູ້ບໍ່ຕ້ອງອາບັດ" (ເລື້ອງທີ ໑໑)

ສະໄໝນັ້ນ ພິກຂຸອົງໜຶ່ງຕ້ອງການທົດລອງຈຶ່ງໃຫ້ຢາພິດແກ່ພິກຂຸອີກອົງໜຶ່ງສັນ ທ່ານເຖິງແກ່ມໍຣະນະພາບ ພິກຂຸຜູ້ທົດລອງຢາພິດເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະທົດລອງ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໔)

## ເລື້ອງກຽມພື້ນທີ່ສ້າງວິຫານ ໓ ເລື້ອງ

[໑໗໔] ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີ ກຳລັງກຽມພື້ນທີ່ສ້າງວິຫານ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມຍົກສິລາສົ່ງຂຶ້ນໄປ ສິລາທີ່ພິກຂຸອົງທີ່ຢູ່ຂ້າງເທິງຮັບໄວ້ບໍ່ດີ ພາດຕົກລົງທັບໃສ່ຫົວພິກຂຸອົງທີ່ຢູ່ຂ້າງລຸ່ມຈົນເຖິງແກ່ມໍຣະນະພາບ ພິກຂຸອົງທີ່ຢູ່ຂ້າງເທິງເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ໄດ້ຈົງໃຈ ຂ້ານ້ອຍ" "ພິກຂຸທ່ານບໍ່ໄດ້ຈົງໃຈ ບໍ່ຕ້ອງອາບັດ" (ເລື້ອງທີ ໑໓)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີກຳລັງກຽມພື້ນທີ່ສ້າງວິຫານ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມຍົກສິລາສົ່ງຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າຈຶ່ງປ່ອຍສິລາລົງໃສ່ຫົວພິກຂຸອົງທີ່ຢູ່ຂ້າງລຸ່ມຈົນເຖິງແກ່ມໍຣະນະພາບ ພິກຂຸອົງທີ່ປ່ອຍສິລາລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໔)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນກໍ່ສ້າງວິຫານ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມຍົກສິລາສົ່ງຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າພິກຂຸອົງທີ່ຢູ່ຂ້າງລຸ່ມ ຈຶ່ງປ່ອຍສິລາລົງໃສ່ຫົວ ແຕ່ທ່ານບໍ່ເຖິງມໍຣະນະພາບ ພິກຂຸອົງທີ່ຢູ່ຂ້າງເທິງເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໕)

## ເລື້ອງດິນຈີ່ ໓ ເລື້ອງ

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນກໍ່ຝາວິຫານ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມສົ່ງດິນຈີ່ຂຶ້ນໄປ ດິນຈີ່ທີ່ພິກຂຸອົງທີ່ຢູ່ຂ້າງເທິງຮັບໄວ້ບໍ່ດີ ພາດຕົກລົງທັບຫົວພິກຂຸອົງທີ່ຢູ່ຂ້າງລຸ່ມເຖິງແກ່ມໍຣະນະພາບ ພິກຂຸອົງທີ່ຢູ່ຂ້າງເທິງເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ໄດ້ຈົງໃຈ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຈົງໃຈ ບໍ່ຕ້ອງອາບັດ"(ເລື້ອງທີ ໑໕)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນກໍ່ຝາວິຫານ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມສົ່ງດິນຈີ່ຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າ ຈຶ່ງປ່ອຍດິນຈີ່ລົງໃສ່ຫົວພິກຂຸອົງທີ່ຢູ່ຂ້າງລຸ່ມ ເຖິງແກ່ມໍຣະນະພາບ ພິກຂຸອົງທີ່ປ່ອຍດິນຈີ່ລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ"(ເລື້ອງທີ ໑໗)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີ ຊ່ອຍກັນກໍ່ຝາວິຫານ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມສົ່ງດິນຈີ່ຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າ ຈຶ່ງປ່ອຍດິນຈີ່ລົງໃສ່ຫົວຂອງພິກຂຸອົງທີ່ຢູ່ຂ້າງລຸ່ມ ແຕ່ພິກຂຸອົງທີ່ຢູ່ຂ້າງລຸ່ມບໍ່ເຖິງແກ່ມໍຣະນະພາບ ພິກຂຸອົງທີ່ປ່ອຍດິນຈີ່ລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໘)

## ເລື້ອງມີດ ໓ ເລື້ອງ

[໑໘໓] ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນເຮັດການກໍ່ສ້າງ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມສົ່ງມີດຂຶ້ນໄປ ມີດທີ່ພິກຂຸອົງທີ່ຢູ່ຂ້າງເທິງຮັບໄວ້ບໍ່ດີ ພາດຕົກລົງເທິງຫົວພິກຂຸອົງທີ່ຢູ່ຂ້າງລຸ່ມເຖິງແກ່ມໍຣະນະພາບ ພິກຂຸອົງທີ່ເຮັດຢູ່ຂ້າງເທິງເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ຈົງໃຈ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຈົງໃຈ ບໍ່ຕ້ອງອາບັດ" (ເລື້ອງທີ ໑໙)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນເຮັດການກໍ່ສ້າງ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມສົ່ງມີດຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າຈຶ່ງປ່ອຍມີດລົງໃສ່ຫົວພິກຂຸອົງທີ່ຢູ່ຂ້າງລຸ່ມເຖິງແກ່ມໍຣະນະພາບ ພິກຂຸອົງທີ່ປ່ອຍມີດຕົກລົງມາເກີດຄວາມກັງວົນໃຈ ວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໐)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນເຮັດການກໍ່ສ້າງ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມສົ່ງມີດຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າ ຈຶ່ງປ່ອຍມີດລົງໃສ່ຫົວຂອງພິກຂຸອົງທີ່ຢູ່ຂ້າງລຸ່ມ ແຕ່ພິກຂຸອົງທີ່ຢູ່ຂ້າງລຸ່ມບໍ່ເຖິງແກ່ມໍຣະນະພາບ ພິກຂຸອົງທີ່ປ່ອຍມີດຕົກລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໑)

## ເລື້ອງໄມ້ກອນ ໓ ເລື້ອງ

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນເຮັດການກໍ່ສ້າງ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມຍົກໄມ້ກອນຫຼັງຄາສົ່ງຂຶ້ນໄປ ໄມ້ກອນຫຼັງຄາທີ່ພິກຂຸອົງທີ່ຢູ່ຂ້າງເທິງຮັບໄວ້ບໍ່ດີ ພາດຕົກລົງເທິງຫົວພິກຂຸອົງທີ່ຢູ່ຂ້າງລຸ່ມເຖິງແກ່ມໍຣະນະພາບ ພິກຂຸອົງທີ່ເຮັດໄມ້ກອນພາດຕົກລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ຈົງໃຈ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຈົງໃຈ ບໍ່ຕ້ອງອາບັດ" (ເລື້ອງທີ ໘໒)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນເຮັດການກໍ່ສ້າງ ພິກຂຸອົງໜຶ່ງຢູ່ຂ້າງລຸ່ມຍົກໄມ້ກອນຫຼັງຄາສົ່ງຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າ ຈຶ່ງປ່ອຍໄມ້ກອນຫຼັງຄາລົງໃສ່ຫົວພິກຂຸອົງທີ່ຢູ່ຂ້າງລຸ່ມເຖິງແກ່ມໍຣະນະພາບ ພິກຂຸອົງທີ່ປ່ອຍໄມ້ກອນຫຼັງຄາລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໓)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນເຮັດການກໍ່ສ້າງ ພິກຂຸອົງໜຶ່ງຢູ່ ຂ້າງລຸ່ມ ຍົກໄມ້ກອນຫຼັງຄາສົ່ງຂຶ້ນໄປ ພິກຂຸອົງທີ່ຢູ່ຂ້າງເທິງມີຄວາມປະສົງຈະຂ້າ ຈຶ່ງປ່ອຍໄມ້ກອນ

ຫຼັງຄາລົງໃສ່ຫົວພິກຂຸອົງທີ່ຢູ່ຂ້າງລຸ່ມແຕ່ບໍ່ເຖິງມໍຣະນະພາບ ພິກຂຸອົງທີ່ປ່ອຍໄມ້ກອນຫຼັງຄາລົງມາເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໔)

## ເລື້ອງຄາດຫ້າງ ໓ ເລື້ອງ

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນຜູກຄາດຫ້າງເຮັດການກໍ່ສ້າງ ພິກຂຸອົງໜຶ່ງບອກອີກອົງໜຶ່ງວ່າ "ທ່ານຈົ່ງຢືນຜູກຢູ່ນີ້" ພິກຂຸນັ້ນຈຶ່ງຢືນຜູກທີ່ນັ້ນ ໄດ້ພາດຕົກລົງມາເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທ່ານຄິດແນວໃດ" "ຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘໕)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີ ຊ່ອຍກັນຜູກຄາດຫ້າງເຮັດການກໍ່ສ້າງ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າບອກອີກອົງໜຶ່ງວ່າ "ທ່ານຈົ່ງຢືນຜູກຢູ່ນີ້" ພິກຂຸອົງນັ້ນຈຶ່ງຢືນຜູກທີ່ນັ້ນ ໄດ້ພາດຕົກລົງມາເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໖)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນຜູກຄາດຫ້າງເຮັດການກໍ່ສ້າງ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າບອກອີກອົງໜຶ່ງວ່າ "ທ່ານຈົ່ງຢືນຜູກຢູ່ນີ້" ພິກຂຸອົງນັ້ນຈຶ່ງຢືນຜູກທີ່ນັ້ນ ໄດ້ພາດຕົກລົງມາ ແຕ່ບໍ່ເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໗)

## ເລື້ອງໃຫ້ລົງຈາກຫຼັງຄາ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມຸງຫຼັງຄາວິຫານສໍາເລັດແລ້ວຈະລົງ ອີກອົງໜຶ່ງບອກທ່ານວ່າ "ນິມົນທ່ານລົງມາທາງນີ້" ພິກຂຸນັ້ນຈຶ່ງລົງທາງນັ້ນ ໄດ້ພາດຕົກລົງມາເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບ

ທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘໗)

ສະໄໝນັ້ນ ພິກຂຸອົງໜຶ່ງມຸງຫຼັງຄາວິຫານສຳເລັດແລ້ວຈະລົງ ອີກອົງໜຶ່ງມີຄວາມປະສົງຈະຂ້າບອກທ່ານວ່າ "ນິມົນທ່ານລົງມາທາງນີ້" ພິກຂຸອົງນັ້ນຈຶ່ງລົງທາງນັ້ນໄດ້ພາດຕົກລົງມາເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໙)

ສະໄໝນັ້ນ ພິກຂຸອົງໜຶ່ງມຸງຫຼັງຄາວິຫານສຳເລັດແລ້ວຈະລົງ ອີກອົງໜຶ່ງມີຄວາມປະສົງຈະຂ້າບອກທ່ານວ່າ "ນິມົນທ່ານລົງມາທາງນີ້" ພິກຂຸອົງນັ້ນຈຶ່ງລົງທາງນັ້ນ ໄດ້ພາດຕົກລົງມາແຕ່ບໍ່ເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໐)

## ເລື້ອງໂຕນໜ້າຜາ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເກີດຄວາມເບື່ອໜ່າຍຈຶ່ງຂຶ້ນພູເຂົາຄິດຊະກູດ ແລ້ວໂຕນລົງທາງໜ້າຜາທັບຊ່າງສານຄົນໜຶ່ງຕາຍ ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຮັດໃຫ້ຕົນເອງຕົກ ພິກຂຸໃດເຮັດໃຫ້ຕົກ ຕ້ອງອາບັດທຸກກົດ" (ເລື້ອງທີ ໑໑)

ສະໄໝນັ້ນ ພວກພິກຂຸສັບພັກຄີ ຂຶ້ນພູເຂົາຄິດຊະກູດ ກິ້ງສິລາຫຼິ້ນ ສິລາຕົກທັບຄົນລ້ຽງງົວຄົນໜຶ່ງຕາຍ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກິ້ງສິລາຫຼິ້ນ ພິກຂຸໃດກິ້ງ ຕ້ອງອາບັດທຸກກົດ" (ເລື້ອງທີ ໑໔)

## ເລື້ອງໂຮມຢາ ໓ ເລື້ອງ

[໑໘໔] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍຈຶ່ງໃຫ້ທ່ານໂຮມຢາຈົນເຖິງແກ່ມໍລະນະພາບ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໓໓)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງໃຫ້ທ່ານໂຮມຢາຈົນເຖິງແກ່ມໍລະນະພາບ ພວກທ່ານເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໓໔)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າຈຶ່ງໃຫ້ທ່ານໂຮມຢາ ແຕ່ທ່ານບໍ່ເຖິງແກ່ມໍລະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໓໕)

## ເລື້ອງນັດຢາ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງປວດຫົວ ພິກຂຸທັງຫຼາຍຈຶ່ງໃຫ້ທ່ານນັດຢາ ທ່ານເຖິງແກ່ມໍລະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໓໖)

ສະໄໝນັ້ນ ພິກຂຸອົງໜຶ່ງປວດຫົວ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າຈຶ່ງໃຫ້ທ່ານນັດຢາຈົນເຖິງແກ່ມໍລະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໓໗)

ສະໄໝນັ້ນ ພິກຂຸອົງໜຶ່ງປວດຫົວ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າຈຶ່ງໃຫ້ທ່ານນັດຢາ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ๓๗)

## ເລື້ອງບີບນວດ ๓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍຈຶ່ງຊ່ອຍກັນບີບນວດທ່ານ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ๓๘)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນບີບນວດທ່ານຈົນເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ๔໐ )

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນບີບນວດທ່ານ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງ ๔໑)

## ເລື້ອງໃຫ້ອາບນ້ຳ ๓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍຈຶ່ງຊ່ອຍກັນອາບນ້ຳໃຫ້ທ່ານ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ

ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘໘ )

ສະໄໝນັ້ນ ພິກຂຸໜຶ່ງອົງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນອາບນ້ຳໃຫ້ທ່ານ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນແກ່ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໓)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນອາບນ້ຳໃຫ້ທ່ານ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໔)

## ເລື້ອງໃຫ້ທານ້ຳມັນ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍຊ່ອຍກັນເອົານ້ຳມັນມາທາໃຫ້ທ່ານ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘໕ )

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນເອົານ້ຳມັນມາທາໃຫ້ທ່ານ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໖)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນເອົານ້ຳມັນມາທາໃຫ້ທ່ານ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ຂ້າພຣະອົງທັງຫຼາຍມີຄວາມ

ປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໔໗)

## ເລື້ອງໃຫ້ລຸກຂຶ້ນ ໓ ເລື້ອງ

[໑໗໕] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍຈຶ່ງຊ່ອຍກັນປະຄອງໃຫ້ທ່ານລຸກຂຶ້ນ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ໔໘)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າຈຶ່ງຊ່ອຍກັນປະຄອງໃຫ້ທ່ານລຸກຂຶ້ນ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໔໙)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າຈຶ່ງຊ່ອຍກັນປະຄອງໃຫ້ທ່ານລຸກຂຶ້ນ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໕໐)

## ເລື້ອງເຮັດໃຫ້ລົ້ມ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍ ຈຶ່ງຊ່ອຍກັນເຮັດໃຫ້ທ່ານລົ້ມລົງ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໕໑)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນເຮັດໃຫ້ທ່ານລົ້ມລົງ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງ

ອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໘)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນເຮັດໃຫ້ທ່ານລົ້ມລົງ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໕໙)

## ເລື້ອງໃຫ້ຕາຍດ້ວຍເຂົ້າ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍຈຶ່ງຊ່ອຍກັນໃຫ້ທ່ານສັນເຂົ້າ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໖໔)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນໃຫ້ທ່ານສັນເຂົ້າ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາ ຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໖໕)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງຊ່ອຍກັນໃຫ້ທ່ານສັນເຂົ້າ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໖໖)

## ເລື້ອງໃຫ້ຕາຍດ້ວຍນ້ຳສັນ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍໃຫ້ທ່ານດື່ມນ້ຳ ທ່ານເຖິງແກ່ມໍຣະນະ

ພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງບໍ່ມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື່ອງທີ ໕໗)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງໃຫ້ທ່ານດື່ມນໍ້າ ທ່ານເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໕໘)

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດ ພິກຂຸທັງຫຼາຍມີຄວາມປະສົງຈະຂ້າ ຈຶ່ງໃຫ້ທ່ານດື່ມນໍ້າ ແຕ່ທ່ານບໍ່ເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານຄິດແນວໃດ" "ພວກຂ້າພຣະອົງມີຄວາມປະສົງຈະຂ້າ ຂ້ານ້ອຍ" "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື່ອງທີ ໕໙)

## ເລື່ອງແມ່ຍິງຖືພາກັບຊາຍຊູ້ ໑ ເລື່ອງ

[໑໘໕] ສະໄໝນັ້ນ ແມ່ຍິງຄົນໜຶ່ງເປັນແມ່ຮ້າງຜົວປະ ໄດ້ຖືພາກັບຊາຍຊູ້ ນາງບອກພິກຂຸທີ່ນາງອຸບປະຖໍາວ່າ "ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ທ່ານຮັບຄໍາແລ້ວ ໄດ້ໃຫ້ຢາເຮັດໃຫ້ແທ້ງລູກແກ່ແມ່ຍິງນັ້ນ ເດັກອ່ອນເຖິງແກ່ຄວາມຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໖໐)

## ເລື່ອງແມ່ຍິງຮ່ວມສາມີ ໒ ເລື່ອງ

ສະໄໝນັ້ນ ຊາຍຄົນໜຶ່ງມີພັນລະຍາ ໒ ຄົນ ຄົນໜຶ່ງເປັນໝັນ ອີກຄົນໜຶ່ງບໍ່ເປັນໝັນ ພັນລະຍາຜູ້ເປັນໝັນໄດ້ບອກພິກຂຸທີ່ນາງອຸບປະຖໍາວ່າ "ຖ້ານາງຄົນນັ້ນເກີດບຸດ ຈັກໄດ້ຄອບຄອງຊັບສົມບັດທັງໝົດ ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ທ່ານຮັບຄໍາແລ້ວ ໄດ້ໃຫ້ຢາເຮັດໃຫ້ແທ້ງລູກແກ່ແມ່ຍິງທີ່ບໍ່ເປັນໝັນ ເດັກອ່ອນເຖິງແກ່ຄວາມຕາຍ ແຕ່ມານດາບໍ່ຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື່ອງທີ ໖໑)

ສະໄໝນັ້ນ ຊາຍຄົນໜຶ່ງມີພັນລະຍາ ໔ ຄົນ ຄົນໜຶ່ງເປັນໝັນ ອີກຄົນໜຶ່ງບໍ່ເປັນໝັນ ພັນລະຍາຜູ້ເປັນໝັນໄດ້ບອກພິກຂຸທີ່ນາງອຸປະຖຳວ່າ "ຖ້ານາງຄົນນັ້ນເກີດບຸດຈັກໄດ້ຄອບຄອງຊັບສົມບັດທັງໝົດ ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ພິກຂຸນັ້ນຮັບຄຳແລ້ວໄດ້ໃຫ້ຢາເຮັດໃຫ້ແທ້ງລູກແກ່ແມ່ຍິງທີ່ບໍ່ເປັນໝັນ ມານດາເຖິງແກ່ຄວາມຕາຍ ແຕ່ເດັກອ່ອນບໍ່ຕາຍ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ " ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໔)

## ເລື້ອງຂ້າມານດາແລະບຸດທັງ ໔ ຄົນຕາຍ ໑ ເລື້ອງ

ສະໄໝນັ້ນ ຊາຍຄົນໜຶ່ງມີພັນລະຍາ ໔ ຄົນ ຄົນໜຶ່ງເປັນໝັນ ອີກຄົນໜຶ່ງບໍ່ເປັນໝັນ ພັນລະຍາຜູ້ເປັນໝັນໄດ້ບອກພິກຂຸທີ່ນາງອຸປະຖຳວ່າ "ຖ້ານາງຄົນນັ້ນເກີດບຸດຈັກໄດ້ຄອບຄອງຊັບສົມບັດທັງໝົດ ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ພິກຂຸນັ້ນຮັບຄຳແລ້ວໄດ້ໃຫ້ຢາເຮັດໃຫ້ແທ້ງລູກແກ່ແມ່ຍິງທີ່ບໍ່ເປັນໝັນ ມານດາແລະບຸດເຖິງແກ່ຄວາມຕາຍທັງ ໔ ຄົນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໘)

## ເລື້ອງຂ້າມານດາແລະບຸດທັງ ໔ ຄົນບໍ່ຕາຍ ໑ ເລື້ອງ

ສະໄໝນັ້ນ ຊາຍຄົນໜຶ່ງມີພັນລະຍາ ໔ ຄົນ ຄົນໜຶ່ງເປັນໝັນ ອີກຄົນໜຶ່ງບໍ່ເປັນໝັນ ພັນລະຍາຜູ້ເປັນໝັນໄດ້ບອກພິກຂຸທີ່ນາງອຸປະຖຳວ່າ "ຖ້ານາງຄົນນັ້ນເກີດບຸດຈັກໄດ້ຄອບຄອງຊັບສົມບັດທັງໝົດ ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ພິກຂຸນັ້ນຮັບຄຳແລ້ວໄດ້ໃຫ້ຢາເຮັດໃຫ້ແທ້ງລູກແກ່ແມ່ຍິງທີ່ບໍ່ເປັນໝັນ ແຕ່ມານດາແລະບຸດບໍ່ຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໔)

## ເລື້ອງໃຫ້ຮີດອອກ ໑ ເລື້ອງ

[໑໗໗] ສະໄໝນັ້ນ ແມ່ຍິງຖືພາຄົນໜຶ່ງບອກພິກຂຸທີ່ນາງອຸປະຖຳວ່າ "ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ພິກຂຸນັ້ນຕອບວ່າ "ນາງ ເຈົ້າຈົ່ງຮີດອອກ" ນາງຮີດລູກໃນທ້ອງເຮັດໃຫ້ແທ້ງລູກ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໕)

## ເລື້ອງນາບລູກໃນທ້ອງໃຫ້ຮ້ອນ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຖືພາບອກພິກຂຸທີ່ນາງອຸບປະຖໍາວ່າ "ຄູບາໂຜດຫາຢາເຮັດໃຫ້ແທ້ງລູກດ້ວຍເທີ້ນ" ພິກຂຸນັ້ນຕອບວ່າ "ນາງ ເຈົ້າຈົ່ງນາບທ້ອງໃຫ້ຮ້ອນ" ນາງນາບທ້ອງໃຫ້ຮ້ອນຈົນແທ້ງລູກ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໕)

## ເລື້ອງແມ່ຍິງເປັນໝັນ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງເປັນໝັນຄົນໜຶ່ງບອກພິກຂຸທີ່ນາງອຸບປະຖໍາວ່າ "ຄູບາໂຜດຫາຢາທີ່ເຮັດໃຫ້ຂ້ານ້ອຍມີລູກໄດ້ດ້ວຍເທີ້ນ" ພິກຂຸນັ້ນຮັບຄໍາແລ້ວໄດ້ໃຫ້ຢາແກ່ແມ່ຍິງເປັນໝັນນັ້ນ ນາງເຖິງແກ່ຄວາມຕາຍ ພິກຂຸນັ້ນເກີດກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໕໖)

## ເລື້ອງແມ່ຍິງບໍ່ເປັນໝັນ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງບໍ່ເປັນໝັນຄົນໜຶ່ງບອກພິກຂຸທີ່ນາງອຸບປະຖໍາວ່າ "ຄູບາໂຜດຫາຢາທີ່ເຮັດໃຫ້ຂ້ານ້ອຍຢຸດມີລູກດ້ວຍເທີ້ນ" ພິກຂຸນັ້ນຮັບຄໍາແລ້ວໄດ້ໃຫ້ຢາແກ່ແມ່ຍິງລູກດົກນັ້ນ ນາງເຖິງແກ່ຄວາມຕາຍ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໕໗)

## ເລື້ອງຈີ້ ໑ ເລື້ອງ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ນິ້ວມືຈີ້ພິກຂຸອົງໜຶ່ງໃນກຸ່ມພວກພິກຂຸ ສັດຕະຣະສະວັກຄີໃຫ້ຫົວ ທ່ານເມື່ອຍທັນໃຈບໍ່ທັນເຖິງແກ່ມໍຣະນະພາບ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະ ຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ" (ເລື້ອງທີ ໕໘)

## ເລື້ອງເຕັງ ໑ ເລື້ອງ

ສະໄໝນັ້ນ ພວກພິກຂຸສັດຕະຣະສະວັກຄີ ຊ່ອຍກັນເຕັງພິກຂຸອົງໜຶ່ງໃນກຸ່ມພວກພິກຂຸສັບພັກຄີຈົນເຖິງແກ່ມໍຣະນະພາບ ດ້ວຍຕັ້ງໃຈວ່າຈັກລົງໂທດ ພວກທ່ານເກີດຄວາມກັງວົນໃຈວ່າ

ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດປາຈິດຕີ" (ເລື້ອງທີ ໗໐)

## ເລື້ອງຂ້າຍັກ ໑ ເລື້ອງ

ສະໄໝນັ້ນ ພິກຂຸໝໍຜີອົງໜຶ່ງ ຂ້າຍັກຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໑)

## ເລື້ອງສົ່ງໄປສູ່ບ່ອນທີ່ມີສັດຮ້າຍແລະຍັກຮ້າຍ ໙ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງສົ່ງພິກຂຸອີກອົງໜຶ່ງໄປສູ່ວິຫານມີຍັກຮ້າຍ ພວກຍັກຂ້າພິກຂຸນັ້ນມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໗໒)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ສົ່ງພິກຂຸອີກອົງໜຶ່ງໄປສູ່ວິຫານມີຮ້າຍ ພວກຍັກຂ້າພິກຂຸນັ້ນມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໓)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ສົ່ງພິກຂຸອີກອົງໜຶ່ງໄປສູ່ວິຫານທີ່ມີຮ້າຍ ພວກຍັກບໍ່ຂ້າທ່ານ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໔)

ສະໄໝນັ້ນ ພິກຂຸອົງໜຶ່ງສົ່ງພິກຂຸອີກອົງໜຶ່ງໄປສູ່ທີ່ກັນດານມີສັດຮ້າຍ ເຫຼົ່າສັດຮ້າຍຂ້າທ່ານມໍຣະນະພາບ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໗໕)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ສົ່ງພິກຂຸອີກອົງໜຶ່ງໄປສູ່ທີ່ກັນດານມີສັດຮ້າຍ ເຫຼົ່າສັດຮ້າຍຂ້າພິກຂຸນັ້ນມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດ

ປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໖)

ສະໄໝນັ້ນ ພິກຂຸອົງໜຶ່ງສົ່ງພິກຂຸອີກອົງໜຶ່ງໄປສູ່ທີ່ກັນດານມີສັດຮ້າຍ ເຫຼົ່າສັດຮ້າຍບໍ່ຂ້າພິກຂຸນັ້ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໗)

ສະໄໝນັ້ນ ພິກຂຸອົງໜຶ່ງສົ່ງພິກຂຸອີກອົງໜຶ່ງໄປສູ່ທີ່ກັນດານມີໂຈນ ພວກໂຈນຂ້າທ່ານມໍຣະນະພາບ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໑໘)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ສົ່ງພິກຂຸອີກອົງໜຶ່ງໄປສູ່ທີ່ກັນດານທີ່ມີໂຈນ ພວກໂຈນຂ້າພິກຂຸນັ້ນມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໙)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ສົ່ງພິກຂຸອີກອົງໜຶ່ງໄປສູ່ທີ່ກັນດານທີ່ມີໂຈນ ພວກໂຈນບໍ່ຂ້າພິກຂຸນັ້ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໒໐)

## ເລື້ອງສຳຄັນວ່າແມ່ນ ໔ ເລື້ອງ

[໑໘໘] ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າພິກຂຸທີ່ຈອງເວນກັນ ສຳຄັນພິກຂຸນັ້ນວ່າເປັນພິກຂຸນັ້ນ ຈຶ່ງຂ້າພິກຂຸນັ້ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໒໑)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າພິກຂຸທີ່ຈອງເວນກັນ ສຳຄັນພິກຂຸນັ້ນວ່າເປັນພິກຂຸນັ້ນແຕ່ຂ້າພິກຂຸອື່ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໒໔)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າພິກຂຸທີ່ຈອງເວນກັນ ສຳຄັນພິກຂຸທີ່ຈອງເວນກັນວ່າເປັນພິກຂຸອື່ນ ແຕ່ຂ້າພິກຂຸຜູ້ຈອງເວນນັ້ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໓)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າພິກຂຸທີ່ຈອງເວນກັນ ສຳຄັນພິກຂຸທີ່ຈອງເວນກັນວ່າເປັນພິກຂຸອື່ນ ແລະໄດ້ຂ້າພິກຂຸອື່ນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໔)

## ເລື້ອງປະຫານ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຖືກຜີເຂົ້າ ພິກຂຸອີກອົງໜຶ່ງທຸບຕີທ່ານຈົນເຖິງແກ່ມໍຣະນະພາບ ພິກຂຸອົງທີ່ທຸບຕີນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໗໕)

ສະໄໝນັ້ນ ພິກຂຸອົງໜຶ່ງຖືກຜີເຂົ້າ ພິກຂຸອີກອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງທຸບຕີທ່ານຈົນເຖິງແກ່ມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໖)

ສະໄໝນັ້ນ ພິກຂຸອົງໜຶ່ງຖືກຜີເຂົ້າ ພິກຂຸອີກອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງທຸບຕີທ່ານ ພິກຂຸນັ້ນບໍ່ເຖິງແກ່ມໍຣະນະພາບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໗)

## ເລື້ອງພັນລະນາສະຫວັນ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງພັນລະນາເລື້ອງສະຫວັນໃຫ້ບຸກຄົນຜູ້ເຮັດຄວາມດີຟັງ ເຂົານ້ອມໃຈເຊື່ອແລ້ວເຖິງແກ່ຄວາມຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໗໘)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ຈຶ່ງພັນລະນາເລື້ອງສະຫວັນໃຫ້ບຸກຄົນຜູ້ເຮັດຄວາມດີຟັງ ເຂົານ້ອມໃຈເຊື່ອແລ້ວເຖິງແກ່ຄວາມຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໗໙)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ຈຶ່ງພັນລະນາເລື້ອງສະຫວັນໃຫ້ບຸກຄົນຜູ້ເຮັດຄວາມດີຟັງ ເຂົານ້ອມໃຈເຊື່ອແຕ່ບໍ່ຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໐)

## ເລື້ອງພັນລະນານະຣົກ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງພັນລະນາເລື້ອງນະຣົກໃຫ້ຜູ້ຄວນເກີດໃນນະຣົກຟັງ ເຂົາຕົກໃຈເຖິງແກ່ຄວາມຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘໑)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງພັນລະນາເລື້ອງນະຣົກໃຫ້ຜູ້ຄວນເກີດໃນນະຣົກຟັງ ເຂົາຕົກໃຈເຖິງແກ່ຄວາມຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໘໒)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າ ຈຶ່ງພັນລະນາເລື້ອງນະຣົກໃຫ້ຜູ້ຄວນເກີດໃນນະຣົກຟັງ ເຂົາຕົກໃຈແຕ່ບໍ່ເຖິງຕາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງປາຣະຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໘໓)

## ເລື້ອງຕົ້ນໄມ້ເມືອງອາລະວີ ໓ ເລື້ອງ

[໑໗໙] ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຈະເຮັດການກໍ່ສ້າງຈຶ່ງຊ່ອຍກັນຕັດຕົ້ນໄມ້ ພິກຂຸອົງໜຶ່ງບອກພິກຂຸອີກອົງໜຶ່ງວ່າ "ທ່ານຈົ່ງຢືນຕັດຢູ່ນີ້" ພິກຂຸອົງນັ້ນ ຈຶ່ງຢືນຕັດທີ່ນັ້ນ ຕົ້ນໄມ້ລົ້ມທັບເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໘໔)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຈະເຮັດການກໍ່ສ້າງ ຈຶ່ງຊ່ອຍກັນຕັດຕົ້ນໄມ້ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງບອກພິກຂຸອີກອົງໜຶ່ງວ່າ "ທ່ານຈົ່ງຢືນຕັດຢູ່ນີ້" ຕົ້ນໄມ້ລົ້ມທັບທ່ານຜູ້ຢືນຕັດຢູ່ທີ່ນັ້ນເຖິງແກ່ມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໕)

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຈະເຮັດການກໍ່ສ້າງ ຈຶ່ງຊ່ອຍກັນຕັດຕົ້ນໄມ້ ພິກຂຸອົງໜຶ່ງມີຄວາມປະສົງຈະຂ້າຈຶ່ງບອກພິກຂຸອີກອົງໜຶ່ງວ່າ "ທ່ານຈົ່ງຢືນຕັດຢູ່ນີ້" ຕົ້ນໄມ້ລົ້ມທັບທ່ານຜູ້ຢືນຕັດຢູ່ທີ່ນັ້ນແຕ່ບໍ່ເຖິງມໍຣະນະພາບ ພິກຂຸອົງທີ່ບອກເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໙໖)

## ເລື້ອງຈູດປ່າ ໓ ເລື້ອງ

[໑໙໐] ສະໄໝນັ້ນ ພວກພິກຂຸສັບພັກຄີຈູດປ່າ ພວກຊາວບ້ານຖືກໄຟລວກຕາຍ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານບໍ່ມີຄວາມປະສົງຈະຂ້າ ບໍ່ຕ້ອງອາບັດ" (ເລື້ອງທີ ໙໗)

ສະໄໝນັ້ນ ພວກພິກຂຸສັບພັກຄີມີຄວາມປະສົງຈະຂ້າ ຈຶ່ງຈູດປ່າ ພວກຊາວບ້ານຖືກໄຟລວກຕາຍ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໙໘)

ສະໄໝນັ້ນ ພວກພິກຂຸສັບພັກຄີມີຄວາມປະສົງຈະຂ້າ ຈຶ່ງຈູດປ່າ ພວກຊາວບ້ານຖືກໄຟລວກ ແຕ່ບໍ່ຕາຍ ພິກຂຸເຫຼົ່ານັ້ນເກີດຄວາມກັງວົນໃຈວ່າ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພວກທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໙໙)

## ເລື້ອງບໍ່ເຮັດໃຫ້ລຳບາກ ໑ ເລື້ອງ

[໑໙໑] ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ລານປະຫານ ບອກນາຍເພດຊະຄາດວ່າ "ທ່ານຢ່າເຮັດໃຫ້ທໍລະມານຫຼາຍ ຈົ່ງປະຫານຊີວິດດ້ວຍການຟັນເທື່ອດຽວ" ເພດຊະຄາດຮັບຄຳແລ້ວປະຫານຊີວິດນັກໂທດນັ້ນ ດ້ວຍການຟັນເທື່ອດຽວ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐໐)

## ເລື້ອງບໍ່ເຮັດຕາມ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງໄປທີ່ລານປະຫານບອກນາຍເພດຊະຄາດວ່າ "ທ່ານຢ່າເຮັດໃຫ້ທໍລະ ມານຫຼາຍ ຈົ່ງປະຫານຊີວິດດ້ວຍການຟັນເທື່ອດຽວ" ເພດຊະຄາດກ່າວວ່າ "ຂ້າພະເຈົ້າຈະບໍ່ເຮັດຕາມຄໍາຂອງທ່ານ" ແລ້ວປະຫານຊີວິດນັກໂທດນັ້ນ ພິກຂຸນັ້ນເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດປາຣາຊິກ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໐໑)

## ເລື້ອງໃຫ້ດື່ມນໍ້າມັນ ໑ ເລື້ອງ

[໑໗໘] ສະໄໝນັ້ນ ບຸຣຸດມີຕີນກຸດຄົນໜຶ່ງ ພວກໝູ່ຍາດຕິພີ່ນ້ອງຊ່ອຍກັນເບິ່ງແຍງຢູ່ໃນເຮືອນ ພິກຂຸອົງໜຶ່ງໄດ້ກ່າວກັບພວກຍາດຕິພີ່ນ້ອງຂອງບຸຣຸດນັ້ນວ່າ "ທ່ານທັງຫຼາຍ ພວກທ່ານຢາກໃຫ້ບຸຣຸດຄົນນີ້ຕາຍບໍ"

"ພວກເຮົາຢາກໃຫ້ເຂົາຕາຍ ຂ້ານ້ອຍ"

"ຖ້າເຊັ່ນນັ້ນ ຈົ່ງໃຫ້ເຂົາດື່ມນໍ້າມັນ"

ໝູ່ຍາດຕິພີ່ນ້ອງນັ້ນຈຶ່ງໃຫ້ບຸຣຸດນັ້ນດື່ມນໍ້າມັນຈົນບຸຣຸດນັ້ນເຖິງແກ່ຄວາມຕາຍ

ພິກຂຸອົງທີ່ບອກວິທີຂ້າເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐໘)

## ເລື້ອງໃຫ້ດື່ມຢາໂລນະໂສວີຣະກະ ໑ ເລື້ອງ

ສະໄໝນັ້ນ ບຸຣຸດມີຕີນກຸດຄົນໜຶ່ງ ພວກໝູ່ຍາດຕິພີ່ນ້ອງຊ່ອຍກັນເບິ່ງແຍງຢູ່ໃນເຮືອນ ພິກຂຸນີອົງໜຶ່ງໄດ້ກ່າວກັບໝູ່ຍາດຕິພີ່ນ້ອງຂອງບຸຣຸດນັ້ນວ່າ "ທ່ານທັງຫຼາຍ ພວກທ່ານຢາກໃຫ້ບຸຣຸດຄົນນີ້ຕາຍບໍ"

"ພວກເຮົາຢາກໃຫ້ເຂົາຕາຍ ຂ້ານ້ອຍ"

"ຖ້າເຊັ່ນນັ້ນ ຈົ່ງໃຫ້ເຂົາດື່ມຢາໂລນະໂສວີຣະກະ"

ໝູ່ຍາດຕິພີ່ນ້ອງ ຈຶ່ງໃຫ້ບຸຣຸດນັ້ນດື່ມຢາໂລນະໂສວີຣະກະຈົນບຸຣຸດນັ້ນເຖິງແກ່ຄວາມຕາຍ

ພິກຂຸນີນັ້ນເກີດຄວາມກັງວົນໃຈ ຈຶ່ງເລົ່າເລື່ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້ ພວກພິກຂຸນີແຈ້ງເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ພິກຂຸນີນັ້ນຕ້ອງອາບັດປາຣາຊິກ" (ເລື້ອງທີ ໑໐໙)

**ປາຣາຊິກສິກຂາບົດທີ ໓ ຈົບ**

# ປາຣາຊິກສິກຂາບົດທີ ໔

## ວ່າດ້ວຍການກ່າວອວດອຸດຕະຣິມະນຸດສະທຳ

### ເລື້ອງພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ

[໑໘໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພິກຂຸຈຳນວນຫຼາຍ ເປັນເພື່ອນເຄີຍເຫັນເຄີຍຄົບກັນມາ ຈຳພັນສາຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາ ເວລານັ້ນ ວັດຊີຊິນນະບົດເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ຂັດສົນ ໃຊ້ສະລາກປັນສ່ວນຊື້ອາຫານ ລົ້ມຕາຍກັນກະດູກຂາວຈູ່ມພູ່ມ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້ ພິກຂຸເຫຼົ່ານັ້ນໄດ້ມີຄວາມຄິດວ່າ "ບັດນີ້ ວັດຊີຊິນນະບົດເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ຂັດສົນ ໃຊ້ສະລາກປັນສ່ວນຊື້ອາຫານ ລົ້ມຕາຍກັນກະດູກຂາວຈູ່ມພູ່ມ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້ ເຮັດແນວໃດນໍ ພວກເຮົາຈຶ່ງຈະພ້ອມພຽງກັນ ຮ່ວມໃຈກັນບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດໂດຍບໍ່ລຳບາກ"

ພິກຂຸບາງພວກສະເໜີວ່າ "ທ່ານທັງຫຼາຍ ຖ້າເຊັ່ນນັ້ນ ພວກເຮົາມາຊ່ອຍກັນເຮັດວຽກຂອງພວກຄະລິຫັດ ເມື່ອຊ່ອຍເຮັດວຽກ ພວກເຂົາກໍຄົງຈະພໍໃຈຖວາຍບິນທະບາດແກ່ພວກເຮົາໂດຍວິທີນີ້ແລ ພວກເຮົາກໍຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດໂດຍບໍ່ລຳບາກ"

ພິກຂຸອີກພວກສະເໜີວ່າ "ຢ່າເລີຍ ທ່ານທັງຫຼາຍ ເປັນຫຍັງພວກເຮົາຈະຕ້ອງໄປຊ່ອຍກັນເຮັດວຽກຂອງພວກຄະລິຫັດ ຂໍໃຫ້ພວກເຮົາມາຊ່ອຍກັນເຮັດໜ້າທີ່ທູດນຳຂ່າວສານໃຫ້ພວກຄະລິຫັດຈະດີ ກວ່າ ເມື່ອເຮັດແນວນີ້ ພວກຄະລິຫັດກໍຄົງຈະພໍໃຈຖວາຍບິນທະບາດແກ່ພວກເຮົາໂດຍວິທີນີ້ແລພວກເຮົາກໍຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດໂດຍບໍ່ລຳບາກ"

ພິກຂຸອີກພວກສະເໜີວ່າ "ຢ່າເລີຍ ທ່ານທັງຫຼາຍ ເປັນຫຍັງພວກເຮົາຈະຕ້ອງໄປຊ່ອຍກັນເຮັດວຽກ ຫຼື ເຮັດໜ້າທີ່ທູດນຳຂ່າວສານໃຫ້ພວກຄະລິຫັດ ທາງທີ່ດີພວກເຮົາມາກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລິຫັດຟັງວ່າ "ພິກຂຸອົງນັ້ນໄດ້ປະຖົມຊານ ອົງນັ້ນໄດ້ທຸຕິຍະຊານ ອົງນັ້ນໄດ້ຕະຕິຍະຊານ ອົງນັ້ນໄດ້ຈະຕຸດຖະຊານ ອົງນັ້ນເປັນພຣະໂສດາບັນ ອົງນັ້ນເປັນພຣະສະກະທາຄາມີ ອົງນັ້ນເປັນພຣະອະນາຄາມີ ອົງນັ້ນເປັນພຣະອະຣະຫັນ ອົງນັ້ນໄດ້ວິດຊາ ໓ ອົງນັ້ນໄດ້ອະພິນຍາ ໖" ເມື່ອເວົ້າແນວນີ້ ພວກຄະລິຫັດກໍຄົງຈະພໍໃຈຖວາຍບິນທະ

ບາດແກ່ພວກເຮົາ ໂດຍວິທີນີ້ພວກເຮົາຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດໂດຍບໍ່ລຳບາກ"

ໃນທີ່ສຸດ ພິກຂຸເຫຼົ່ານັ້ນທັງໝົດຕົກລົງກັນວ່າ "ທ່ານທັງຫຼາຍ ດ້ວຍວິທີທີ່ພວກເຮົາພາກັນກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລຶຫັດຟັງເປັນວິທີທີ່ດີກວ່າວິທີອື່ນ"

[໑໘໔] ຕໍ່ມາພິກຂຸເຫຼົ່ານັ້ນໄດ້ພາກັນກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລຶຫັດຟັງວ່າ "ພິກຂຸອົງນັ້ນໄດ້ປະຖົມຊານ ຯລຯ ອົງນັ້ນໄດ້ຈະຕຸດຖະຊານ ອົງນັ້ນເປັນພຣະໂສດາບັນ ຯລຯ ອົງນັ້ນໄດ້ອະພິນຍາ ໖"

ຄັ້ງນັ້ນແລ ປະຊາຊົນກໍພາກັນຍິນດີວ່າ "ເປັນລາບຂອງພວກເຮົານໍ ພວກເຮົາໄດ້ດີແລ້ວນໍທີ່ມີພິກຂຸທັງຫຼາຍເຊັ່ນນີ້ມາຢູ່ຈຳພັນສາຢູ່ນຳ ຍ້ອນແຕ່ກ່ອນນີ້ພວກເຮົາບໍ່ມີພິກຂຸທັງຫຼາຍທີ່ມີຄຸນສົມບັດເໝືອນຢ່າງພິກຂຸຜູ້ມີສິນ ມີກັນລະຍານະທຳເຫຼົ່ານີ້ມາຢູ່ຈຳພັນສາເລີຍ" ໂພຊະນະ (ອາຫານ) ຯລຯ ຂາທະນີຍະ (ຂອງຂົບຫຍໍ້າ) ຯລຯ ສາຍະນີຍະ (ຂອງຊີມ) ຯລຯ ປານະ (ເຄື່ອງດື່ມ) ຊະນິດທີ່ພວກເຂົາຈະຖວາຍແກ່ພິກຂຸເຫຼົ່ານັ້ນ ພວກເຂົາບໍ່ກິນ ບໍ່ຂົບຫຍ້ຳ ບໍ່ຊີມ ບໍ່ດື່ມດ້ວຍຕົນເອງ ທັງບໍ່ໃຫ້ແກ່ມານດາບິດາ ບຸດ ພັນລະຍາ ຄົນຮັບໃຊ້ ກຳມະກອນ ມິດອຳມາດຍາດສາຍໂລຫິດ

ພິກຂຸເຫຼົ່ານັ້ນ ຈຶ່ງເປັນຜູ້ມີນ້ຳມີນວນ ມີອິນຊີຜ່ອງໄສ ມີໃບໜ້າເອີບອິ່ມ ມີຜິວພັນຜຸດຜ່ອງ ມີປະເພນີຢູ່ວ່າ ເມື່ອພິກຂຸທັງຫຼາຍອອກພັນສາແລ້ວຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເມື່ອພິກຂຸເຫຼົ່ານັ້ນຈຳພັນສາຄົບ ໓ ເດືອນແລ້ວຈຶ່ງເກັບເສນາສະນະ ຖືບາດ ແລະຈີວອນອອກເດີນທາງມຸ້ງໄປສູ່ນະຄອນເວສາລີ ຈາຣິກໄປໂດຍລຳດັບ ເຖິງນະຄອນເວສາລີ ຜ່ານປ່າມະຫາວັນ ໄປເຖິງກູຕາຄານສາລາ ແລ້ວເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວຈຶ່ງຖວາຍບັງຄົມ ແລ້ວນັ່ງລົງຢູ່ໃນທີ່ສົມຄວນ

## ພິກຂຸຕ່າງທິດມາເຂົ້າເຝົ້າ

ສະໄໝນັ້ນ ພິກຂຸທັງຫຼາຍທີ່ຈຳພັນສາຢູ່ໃນທິດຕ່າງ ໆ ເບິ່ງຈ່ອຍແຫ້ງ ມີຜິວພັນໝອງຄ້ຳຫຼ່າ ເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ສ່ວນພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາກັບມີນ້ຳມີນວນ ມີອິນຊີຜ່ອງໄສ ມີໃບໜ້າເອີບອິ່ມ ມີຜິວພັນຜຸດຜ່ອງ ອັນໜຶ່ງ ການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍຊົງປາໄສກັບພຣະອາຄັນຕຸກະທັງຫຼາຍນັ້ນກໍເປັນພຸດທະປະເພນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ບໍ? ພວກທ່ານເປັນຜູ້ພ້ອມພຽງກັນຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກຢູ່ບໍ? ແລະບິນທະບາດໂດຍບໍ່ລຳບາກຢູ່ບໍ?"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຍັງສະບາຍດີຢູ່ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ອັນໜຶ່ງພວກຂ້າພຣະອົງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດໂດຍບໍ່ລຳບາກ ຂ້ານ້ອຍ"

## ພຸດທະປະເພນີ

ພຣະຕະຖາຄົດເຈົ້າທັງຫຼາຍຊົງຮູ້ເລື້ອງ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື້ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື້ອງທີ່ບໍ່ເປັນປະໂຫຍດ ຍ້ອນພຣະຕະຖາຄົດເຈົ້າທັງຫຼາຍຊົງກຳຈັດເລື້ອງທີ່ບໍ່ເປັນປະໂຫຍດດ້ວຍອະຣິຍະມັກແລ້ວ

ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ສອບຖາມພິກຂຸທັງຫຼາຍດ້ວຍເຫດ ໒ ປະການ ຄືຈະຊົງສະແດງທຳຢ່າງໜຶ່ງ ຈະຊົງບັນຍັດສິກຂາບົດແກ່ພຣະສາວົກຢ່າງໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກຈຶ່ງໄດ້ຕັດຖາມພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາວ່າ "ເຮັດແນວໃດ ທ່ານທັງຫຼາຍຈຶ່ງພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາ ຜາສຸກແລະບິນທະບາດໂດຍບໍ່ລຳບາກ"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນຈຶ່ງໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານມີຄຸນວິເສດນັ້ນຈິງແທ້ບໍ?" ພິກຂຸເຫຼົ່ານັ້ນຂາບທູນວ່າ "ບໍ່ມີຈິງ ຂ້ານ້ອຍ"

## ຊົງຕຳໜິ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳຂອງພວກທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເປັນຫຍັງພວກທ່ານຈຶ່ງພາກັນກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລືຫັດຟັງ ຍ້ອນເຫັນແກ່ປາກແກ່ທ້ອງນໍ ພວກທ່ານໃຊ້ມີດຂ້າງົວຄວ້ານທ້ອງຕົນເອງ ຍັງດີກວ່າການກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລືຫັດຟັງ ຍ້ອນອັນໃດນໍ? ຍ້ອນຜູ້ໃຊ້ມີດຂ້າງົວຄວ້ານທ້ອງຕົນເອງຈະເຮັດໃຫ້ເຖິງຄວາມຕາຍ ຫຼື ທຸກປາງຕາຍ ຍ້ອນການກະທຳນັ້ນເປັນເຫດ ຫຼັງຈາກຕາຍແລ້ວກໍບໍ່ຕ້ອງໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກສ່ວນຜູ້ກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລືຫັດຟັງ ຫຼັງຈາກຕາຍແລ້ວກໍຈະຕ້ອງໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ໂມຄະບຸຣຸດທັງຫຼາຍ ການເຮັດແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ຯລຯ ເມື່ອຊົງຕຳໜິແລ້ວ ໄດ້ຊົງກະທຳທຳມີກະຖາຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ

## ມະຫາໂຈນ ໕ ຈຳພວກ

[໑໙໕] ພິກຂຸທັງຫຼາຍ ມະຫາໂຈນ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ ຄື

໑. ມະຫາໂຈນບາງຄົນໃນໂລກນີ້ ປາຖະໜາວ່າ ເມື່ອໃດນໍ ເຮົາຈຶ່ງຈັກມີບໍລິວານເປັນຮ້ອຍ ຫຼື ເປັນພັນຫ້ອມລ້ອມແລ້ວທ່ອງທ່ຽວໄປໃນຄາມນິຄົມ ແລະຣາດຊະທານີ ເຮັດການຂ້າເອງ ສັ່ງໃຫ້ຜູ້ອື່ນຂ້າ ຕັດມືຕີນຜູ້ອື່ນເອງ ສັ່ງໃຫ້ຜູ້ອື່ນຕັດ ເຜົາບ້ານເຮືອນເອງ ສັ່ງໃຫ້ຜູ້ອື່ນເຜົາ ຕໍ່ມາ ມະຫາໂຈນນັ້ນ ກໍໄດ້ມີບໍລິວານເປັນຮ້ອຍ ຫຼື ເປັນພັນຫ້ອມລ້ອມແລ້ວທ່ອງທ່ຽວໄປໃນຄາມນິຄົມ ແລະຣາດຊະທານີ ເຮັດການຂ້າເອງ ສັ່ງໃຫ້ຜູ້ອື່ນຂ້າ ຕັດເອງ ສັ່ງໃຫ້ຜູ້ອື່ນຕັດ ເຜົາເອງ ສັ່ງໃຫ້ຜູ້ອື່ນເຜົາ ສັນໃດ

ພິກຂຸຊົ່ວບາງອົງໃນທຳວິໄນກໍສັນນັ້ນຄືກັນ ປາຖະໜາວ່າ ເມື່ອໃດນໍ ເຮົາຈັກມີພິກຂຸບໍລິວານເປັນຮ້ອຍ ຫຼື ເປັນພັນຫ້ອມລ້ອມແລ້ວທ່ອງທ່ຽວໄປໃນຄາມນິຄົມ ແລະຣາດຊະທານີ ອັນຄະລືຫັດ ແລະ ບັນພະຊິດສັກກາຣະ ເຄົາຣົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດ ຕໍ່ມາ ພິກຂຸນັ້ນກໍໄດ້ມີພິກຂຸບໍລິວານເປັນຮ້ອຍ ຫຼື ເປັນພັນຫ້ອມລ້ອມແລ້ວທ່ອງທ່ຽວໄປໃນຄາມນິຄົມ ແລະ ຣາດຊະທານີ ອັນຄະລືຫັດ ແລະບັນພະຊິດສັກກາຣະ ເຄົາຣົບ ນັບຖື ບູຊາ ຢຳເກງ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ພິກຂຸທັງຫຼາຍ ນີ້ຄືມະຫາໂຈນຈຳພວກທີ ໑ ທີ່ມີຜາກົດຢູ່ໃນໂລກ

໒. ພິກຂຸທັງຫຼາຍ ຍັງມີພິກຂຸຊົ່ວບາງອົງໃນທຳວິໄນນີ້ ຮ່ຳຮຽນທຳວິໄນທີ່ຕະຖາຄົດປະກາດແລ້ວ ອວດອ້າງວ່າເປັນຂອງຕົນ ພິກຂຸທັງຫຼາຍ ນີ້ຄືມະຫາໂຈນຈຳພວກທີ ໒ ທີ່ມີຜາກົດຢູ່ໃນໂລກ

໓. ພິກຂຸທັງຫຼາຍ ຍັງມີພິກຂຸຊົ່ວບາງອົງໃນທຳວິໄນນີ້ ໂຈດເພື່ອນພິກຂຸຜູ້ບໍລິສຸດ ຜູ້ປະພຶດພົມມະຈັນອັນບໍລິສຸດ ດ້ວຍເລື້ອງທີ່ທຳລາຍພົມມະຈັນອັນບໍ່ມີມູນ ພິກຂຸທັງຫຼາຍ ນີ້ຄືມະຫາໂຈນຈຳພວກທີ ໓

໔. ພິກຂຸທັງຫຼາຍ ຍັງມີພິກຂຸຊົ່ວບາງອົງໃນທຳວິໄນນີ້ ສົງເຄາະປະຈົບຄະລືຫັດດ້ວຍຄະຣຸພັນຂອງສົງຄືອາຣາມ ພື້ນທີ່ອາຣາມ ວິຫານ ພື້ນທີ່ວິຫານ ຕຽງ ຕັ່ງ ຟູກ ໝອນ ໝໍ້ ໂລຫະ ອ່າງໂລຫະ ກະຖາງໂລຫະ ກະທະໂລຫະ ມີດ ຂວານ ຫອກ ຈົກ ສະວ່ານ ເຄືອເຂົາ ໄມ້ໄຜ່ ຫຍ້າມຸງກະຕ່າຍ ຫຍ້າແຝກ ຫຍ້າສາມັນ ດິນໜຽວ ເຄື່ອງໄມ້ ເຄື່ອງດິນ ພິກຂຸທັງຫຼາຍ ນີ້ຄືມະຫາໂຈນຈຳພວກທີ ໔

໕. ພິກຂຸທັງຫຼາຍ ພິກຂຸຜູ້ກ່າວອວດອຸດຕະຣິມະນຸດສະທຳອັນບໍ່ມີຢູ່ ບໍ່ເປັນຈິງໃນຕົນ ເປັນຍອດມະຫາໂຈນໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸນັ້ນ ສັນອາຫານຂອງຊາວບ້ານດ້ວຍໄຖຍະຈິດ

## ນິຄົມຄາຖາ

ພິກຂຸຜູ້ປະກາດຕົນເຊິ່ງມີພາວະເປັນຢ່າງໜຶ່ງ
ໃຫ້ຄົນເຂົ້າໃຈວ່າເປັນຢ່າງອື່ນ
ສັນອາຫານດ້ວຍໄຖຍະຈິດ
ປຽບເໝືອນພານນົກລວງຈັບນົກມາກິນ
ພິກຂຸຊົ່ວຈຳນວນຫຼາຍມີຜ້າກາສາຍະພັນຢູ່ຄໍ
ມີທຳຊົ່ວຊາມ ບໍ່ສຳລວມ ພວກທ່ານຍ່ອມຕົກນະຣົກ
ຍ້ອນບາບກຳທັງຫຼາຍທີ່ຊົ່ວຊາມນັ້ນ
ພິກຂຸທຸສີນບໍ່ສຳລວມ ກິນກ້ອນເຫຼັກທີ່ຮ້ອນເໝືອນແປວໄຟຍັງດີກວ່າ
ບໍລິໂພກອາຫານຂອງຊາວບ້ານບໍ່ດີເລີຍ

## ຊົງບັນຍັດສິກຂາບົດ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ ໂດຍປະການຕ່າງ ໆ ແລ້ວ ໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກບຳລຸງຍາກ ໆລໆ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໙໖] **ກໍ ພິກຂຸໃດ ບໍ່ຮູ້ຍິ່ງ ກ່າວອວດອຸດະຣິມະນຸດສະທຳອັນເປັນຍານະທັດສະນະ ອັນປະເສີດ ອັນສາມາດ ໃຫ້ນ້ອມເຂົ້າມາໃນຕົນວ່າ "ຂ້າພະເຈົ້າຮູ້ແບບນີ້ ເຫັນແບບນີ້" ເມື່ອສະໄໝຕໍ່ຈາກນັ້ນ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມບໍ່ໂຈດກໍຕາມ ທ່ານຜູ້ຕ້ອງອາບັດແລ້ວ ຫວັງຄວາມບໍລິສຸດເພິ່ງກ່າວແບບນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າບໍ່ຮູ້ແບບນັ້ນ ໄດ້ກ່າວວ່າຮູ້ ຂ້າພະເຈົ້າບໍ່ເຫັນແບບນັ້ນ ໄດ້ກ່າວວ່າເຫັນ ຂ້າພະເຈົ້າກ່າວຄຳຂາດຈາກປະໂຫຍດ ເປັນຄຳຕົວະ" ແມ່ນພິກຂຸນີ້ເປັນປາຣາຊິກ ຫາສັງວາດບໍ່ໄດ້**

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວແບບນີ້

### ເລື້ອງພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ ຈົບ

## ເລື້ອງພິກຂຸສຳຄັນວ່າໄດ້ບັນລຸ

[໑໙໗] ສະໄໝນັ້ນ ພິກຂຸຈຳນວນຫຼາຍ ເຂົ້າໃຈມັກຜິນທີ່ຍັງບໍ່ໄດ້ເຫັນວ່າໄດ້ເຫັນ ບໍ່ໄດ້ເຖິງວ່າໄດ້ເຖິງ ບໍ່ໄດ້ບັນລຸວ່າໄດ້ບັນລຸ ບໍ່ໄດ້ເຮັດໃຫ້ແຈ້ງວ່າໄດ້ເຮັດໃຫ້ແຈ້ງ ພາກັນພະຍາຍາມ

ມັກຜົນດ້ວຍສຳຄັນວ່າໄດ້ບັນລຸ ເມື່ອຕໍ່ມາ ຈິດຂອງພິກຂຸເຫຼົ່ານັ້ນເອນອຽງໄປທາງຄວາມກຳໜັດແດ່ ທາງຄວາມຂັດເຄືອງແດ່ ທາງຄວາມຫຼົງແດ່ ເກີດຄວາມກັງວົນໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ແລ້ວ ແຕ່ພວກເຮົາເຂົ້າໃຈມັກຜົນທີ່ຍັງບໍ່ໄດ້ເຫັນວ່າໄດ້ເຫັນ ບໍ່ໄດ້ເຖິງວ່າໄດ້ເຖິງ ບໍ່ໄດ້ບັນລຸວ່າໄດ້ບັນລຸ ບໍ່ໄດ້ເຮັດໃຫ້ແຈ້ງວ່າໄດ້ເຮັດໃຫ້ແຈ້ງ ຈຶ່ງອວດອ້າງມັກຜົນຕາມທີ່ສຳຄັນວ່າໄດ້ບັນລຸ ພວກເຮົາຕ້ອງອາບັດປາຣາຊິກແລ້ວບໍ່ນໍ ຈຶ່ງແຈ້ງເລື້ອງນັ້ນໃຫ້ພຣະອານົນຮູ້ ພຣະອານົນຈຶ່ງຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມີຢູ່ຄືກັນ ອານົນ ທີ່ພິກຂຸທັງຫຼາຍເຂົ້າໃຈມັກຜົນທີ່ຍັງບໍ່ໄດ້ເຫັນວ່າໄດ້ເຫັນ ບໍ່ໄດ້ເຖິງວ່າໄດ້ເຖິງ ບໍ່ໄດ້ບັນລຸວ່າໄດ້ບັນລຸ ບໍ່ໄດ້ເຮັດໃຫ້ແຈ້ງວ່າໄດ້ເຮັດໃຫ້ແຈ້ງ ຈຶ່ງອວດອ້າງມັກຜົນຕາມທີ່ສຳຄັນວ່າໄດ້ບັນລຸ ແຕ່ກໍລະນີນີ້ບໍ່ຄວນກ່າວ ວ່າມີ"[໑]

ລຳດັບນັ້ນພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາ ຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຕັດຮຽກພິກຂຸທັງຫຼາຍ ຯລຯ ຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

**ອັນໜຶ່ງ ພິກຂຸໃດບໍ່ຮູ້ຍິ່ງ ກ່າວອວດອຸດຕະຣິມະນຸດສະທຳອັນເປັນຍານະທັດສະນະທີ່ປະເສີດອັນສາມາດ ໃຫ້ນ້ອມເຂົ້າມາໃນຕົນວ່າ "ຂ້າພະເຈົ້າຮູ້ແນວນີ້ ເຫັນແນວນີ້" ເມື່ອສະໄໝຕໍ່ຈາກນັ້ນ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມ ບໍ່ໂຈດກໍຕາມ ທ່ານຜູ້ຕ້ອງອາບັດແລ້ວ ຫວັງຄວາມບໍລິສຸດເພິ່ງກ່າວແນວນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າບໍ່ຮູ້ແນວນັ້ນ ໄດ້ກ່າວວ່າຮູ້ ຂ້າພະເຈົ້າບໍ່ເຫັນແນວນັ້ນ ໄດ້ກ່າວວ່າເຫັນ ຂ້າພະເຈົ້າກ່າວຄຳຂາດປະໂຫຍດ ເປັນຄຳຕົວະ" ເວັ້ນໄວ້ແຕ່ສຳຄັນວ່າໄດ້ບັນລຸ ແມ່ນພິກຂຸນີ້ກໍເປັນປາຣາຊິກ ຫາສັງວາດບໍ່ໄດ້**

### ເລື້ອງພິກຂຸສຳຄັນວ່າໄດ້ບັນລຸ ຈົບ

## ສິກຂາບົດວິພັງ

[໑໙໗] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ບໍ່ຮູ້ຍິ່ງ ຄື ພິກຂຸບໍ່ຮູ້ບໍ່ເຫັນກຸສົນທຳໃນຕົນເຊິ່ງບໍ່ມີຢູ່ ບໍ່ເປັນຈິງ ຫາບໍ່ໄດ້ ກ່າວວ່າເຮົາມີກຸສົນທຳ

ທີ່ຊື່ວ່າ ອຸດຕະຣິມະນຸດສະທຳ ໄດ້ແກ່ ຊານ ວິໂມກ ສະມາທິ ສະມາບັດ ຍານະທັດສະ

ນະ ມັກຄະພາວະນາ ການເຮັດຜົນໃຫ້ແຈ້ງ ການລະກິເລດ ພາວະທີ່ຈິດປອດຈາກກິເລດ ຄວາມຍິນດີໃນເຮືອນວ່າງ

ຄຳວ່າ ນ້ອມເຂົ້າມາໃນຕົນ ໄດ້ແກ່ ນ້ອມກຸສົນທຳເຫຼົ່ານັ້ນເຂົ້າໃນຕົນ ຫຼື ນ້ອມຕົນເຂົ້າໃນກຸສົນທຳເຫຼົ່ານັ້ນ

ຄຳວ່າ ຍານ ໄດ້ແກ່ ວິດຊາ ໓

ຄຳວ່າ ທັດສະນະ ໄດ້ແກ່ ຍານກໍຄືທັດສະນະ ທັດສະນະກໍຄືຍານ

ຄຳວ່າ ກ່າວອວດ ຄື ບອກແກ່ຊາຍ ຫຼື ແກ່ແມ່ຍິງ ແກ່ບັນພະຊິດ ຫຼື ແກ່ຄະລືຫັດ

ຄຳວ່າ ຂ້າພະເຈົ້າຮູ້ແນວນີ້ ເຫັນແນວນີ້ ຄວາມວ່າ "ຂ້າພະເຈົ້າຮູ້ທຳເຫຼົ່ານັ້ນ ເຫັນທຳເຫຼົ່ານັ້ນ ທຳເຫຼົ່ານັ້ນມີຢູ່ໃນຂ້າພະເຈົ້າ ແລະຂ້າພະເຈົ້າຍ່ອມເຫັນຊັດແຈ້ງທຳເຫຼົ່ານັ້ນ"

ຄຳວ່າ ເມື່ອສະໄໝຕໍ່ຈາກນັ້ນ ຄື ລ່ວງຂະນະ ໄລຍະ ເວລາຕໍ່ຈາກທີ່ກ່າວອວດນັ້ນ

ຄຳວ່າ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມ ຄື ມີຜູ້ໂຈດໃນເລື້ອງທີທ່ານກ່າວອ້າງວ່າ "ທ່ານບັນລຸອັນໃດ ບັນລຸແນວໃດ ບັນລຸເມື່ອໃດ ບັນລຸຢູ່ໃສ ລະກິເລດເຫຼົ່າໃດໄດ້ ໄດ້ທຳອັນໃດ"

ຄຳວ່າ ບໍ່ໂຈດ ຄື ບໍ່ມີຜູ້ໃດໂຈດ

ຄຳວ່າ ຜູ້ຕ້ອງອາບັດແລ້ວ ຄວາມວ່າ ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຈິງບໍ່ເປັນຈິງ ຕ້ອງອາບັດປາຣາຊິກແລ້ວ

ຄຳວ່າ ຫວັງຄວາມບໍລິສຸດ ຄື ປະສົງຈະເປັນຄະລືຫັດ ອຸປາສົກ ອາຣາມິກ (ຄົນວັດ) ຫຼື ສາມະເນນ

ຄຳວ່າ ທ່ານທັງຫຼາຍ ຂ້າພະເຈົ້າບໍ່ຮູ້ແນວນັ້ນ ໄດ້ກ່າວວ່າຮູ້ ຂ້າພະເຈົ້າບໍ່ເຫັນແນວນັ້ນ ໄດ້ກ່າວວ່າເຫັນ ຄວາມວ່າ ພິກຂຸກ່າວວ່າ "ຂ້າພະເຈົ້າບໍ່ຮູ້ທຳເຫຼົ່ານັ້ນ ບໍ່ເຫັນທຳເຫຼົ່ານັ້ນ ທຳເຫຼົ່ານັ້ນບໍ່ມີ ແລະຂ້າພະເຈົ້າກໍບໍ່ເຫັນຊັດແຈ້ງທຳເຫຼົ່ານັ້ນ"

ຄຳວ່າ ກ່າວຄຳຂາດປະໂຫຍດ ເປັນຄຳຕົວະ ຄວາມວ່າ ຂ້າພະເຈົ້າກ່າວຄຳບໍ່ມີປະໂຫຍດ ກ່າວຕົວະ ກ່າວບໍ່ຈິງ ກ່າວສິ່ງທີ່ບໍ່ມີ ຂ້າພະເຈົ້າບໍ່ຮູ້ກ່າວໄປແລ້ວ

ຄຳວ່າ ເວັ້ນໄວ້ແຕ່ສຳຄັນວ່າໄດ້ບັນລຸ ຄື ຍົກເວັ້ນການສຳຄັນເຂົ້າໃຈຜິດວ່າໄດ້ບັນລຸ

ຄຳວ່າ ແມ່ນພິກຂຸນີ້ ຄື ພິກຂຸທີ່ພຣະຜູ້ມີພຣະພາກເຈົ້າຕັດທຽບກັບພິກຂຸອົງກ່ອນ ໆ

ຄຳວ່າ ເປັນປາຣາຊິກ ຄວາມວ່າ ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ບໍ່ເປັນຈິງ ຍ່ອມບໍ່ເປັນສະມະນະບໍ່ເປັນເຊື້ອສາຍສາກະຍະບຸດ ປຽບ ເໝືອນຕົ້ນຕານຍອດກຸດທີ່ບໍ່ອາດງອກໄດ້ຕໍ່ໄປ ດັ່ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ເປັນປາຣາຊິກ"

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າ ສັງວາດ ໄດ້ແກ່ກຳທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າ ສັງວາດ ສັງວາດນັ້ນບໍ່ມີກັບພິກຂຸອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ຫາສັງວາດບໍ່ໄດ້"

## ບົດພາຊະນີ

[໑໙໙] ທີ່ຊື່ວ່າ ອຸດຕະຣິມະນຸດສະທຳ ໄດ້ແກ່ ຊານ ວິໂມກ ສະມາທິ ສະມາບັດ ຊານ ທັດສະນະ ມັກຄະພາວະນາ ການເຮັດຜົນໃຫ້ແຈ້ງ ການລະກິເລດ ພາວະທີ່ຈິດປອດຈາກກິເລດ ຄວາມຍິນດີໃນເຮືອນວ່າງ

ຄຳວ່າ ຊານ ໄດ້ແກ່ ປະຖົມຊານ ທຸຕິຍະຊານ ຕະຕິຍະຊານ ຈະຕຸດຖະຊານ

ຄຳວ່າ ວິໂມກ ໄດ້ແກ່ ສູນຍະຕະວິໂມກ ອະນິມິດຕະວິໂມກ ອັບປະນິຫິຕະວິໂມກ

ຄຳວ່າ ສະມາທິ ໄດ້ແກ່ ສູນຍະຕະສະມາທິ ອະນິມິດຕະສະມາທິ ອັບປະນິຫິຕະສະມາທິ

ຄຳວ່າ ສະມາບັດ ໄດ້ແກ່ ສູນຍະຕະສະມາບັດ ອະນິມິດຕະສະມາບັດອັບປະນິຫິຕະສະມາບັດ

ຄຳວ່າ ຍານ ໄດ້ແກ່ ວິດຊາ ໓

ຄຳວ່າ ມັກຄະພາວະນາ ໄດ້ແກ່ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘

ຄຳວ່າ ການເຮັດຜົນໃຫ້ແຈ້ງ ໄດ້ແກ່ ການເຮັດໂສດາປັດຕິຜົນໃຫ້ແຈ້ງ ການເຮັດສະກະທາຄາມິຜົນໃຫ້ແຈ້ງ ການເຮັດອະນາຄາມິຜົນໃຫ້ແຈ້ງ ການເຮັດອະຣະຫັດຕະຜົນໃຫ້ແຈ້ງ

ຄຳວ່າ ການລະກິເລດ ໄດ້ແກ່ ການລະຣາຄະ ການລະໂທສະ ການລະໂມຫະ

ຄຳວ່າ ພາວະທີ່ຈິດປອດຈາກກິເລດ ໄດ້ແກ່ ພາວະທີ່ຈິດປອດຈາກຣາຄະ ພາວະ ທີ່ຈິດປອດຈາກໂທສະ ພາວະທີ່ຈິດປອດຈາກໂມຫະ

ຄຳວ່າ ຄວາມຍິນດີໃນເຮືອນວ່າງ ໄດ້ແກ່ ຄວາມຍິນດີໃນເຮືອນວ່າງດ້ວຍປະຖົມຊານ ຄວາມຍິນດີໃນເຮືອນວ່າງດ້ວຍທຸຕິຍະຊານ ຄວາມຍິນດີໃນເຮືອນວ່າງດ້ວຍຕະຕິຍະຊານ ຄວາມຍິນດີໃນເຮືອນວ່າງດ້ວຍຈະຕຸດຖະຊານ

## ສຸດທິກະວາຣະກະຖາ

## ສຸດທິກະຊານ

## ປະຖົມຊານ

[໔໐໐] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໔) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ດ້ວຍອາການ ໔ ຢ່າງ ຄື

(໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ດ້ວຍອາການ ໕ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ດ້ວຍອາການ ໖ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

[໒໐໑] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານຢູ່" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານຢູ່" ດ້ວຍອາການ ໔ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານຢູ່" ດ້ວຍອາການ ໕ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານຢູ່" ດ້ວຍອາການ ໖ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າປະຖົມຊານຢູ່" ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

[໔໐໒] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ເຂົ້າປະຖົມຊານແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າ ກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ເຂົ້າປະຖົມຊານແລ້ວ" ດ້ວຍອາການ ໔ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ເຂົ້າປະຖົມຊານແລ້ວ" ດ້ວຍອາການ ໕ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ເຂົ້າປະຖົມຊານແລ້ວ" ດ້ວຍອາການ ໖ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ເຂົ້າປະຖົມຊານແລ້ວ" ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

[໔໐໓] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ" ດ້ວຍອາການ ໔ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ" ດ້ວຍອາການ ໕ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ" ດ້ວຍອາການ ໖ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ" ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

[໒໐໔] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ຊຳນານໃນປະຖົມຊານ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າ ກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ຊຳນານໃນປະຖົມຊານ" ດ້ວຍອາການ ໔ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ຊຳນານໃນປະຖົມຊານ" ດ້ວຍອາການ ໕ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ຊຳນານໃນປະຖົມຊານ" ດ້ວຍອາການ ໖ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເປັນຜູ້ຊຳນານໃນປະຖົມຊານ" ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓)

ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

[໔໐໕] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ດ້ວຍອາການ ໔ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ດ້ວຍອາການ ໕ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ດ້ວຍອາການ ໖ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຣາຊິກ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກໍາລັງກ່າວ ກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

(ປະຖົມຊານນີ້ນັກປາດໃຫ້ພິສະດານແລ້ວ ສັນໃດ ແມ່ນຊານທັງມວນກໍເພິ່ງໃຫ້ພິສະດານສັນນັ້ນ)

## ທຸຕິຍະຊານ ຕະຕິຍະຊານ ແລະ ຈະຕຸດຖະຊານ

[໔໐໖] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າຕະຕິຍະຊານ ຯລຯ ຈະຕຸດຖະຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ຈະຕຸດຖະຊານ ຯລຯ ຂ້າພະເຈົ້າເປັນຜູ້ຊໍານານ ຯລຯ ຂ້າພະເຈົ້າເຮັດຈະຕຸດຖະຊານໃຫ້ແຈ້ງແລ້ວ ດ້ວຍອາການ ໗ ຢ່າງ ຄື (໑)

ເບື້ອງຕົ້ນທ່ານຮູ້ວ່າ ຈັກກ່າວຕົວະ (໒) ກຳລັງກ່າວ ກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວ ກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຖືກ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຣາຊິກ

## ສຸດທິກະວິໂມກ

## ສູນຍະຕະວິໂມກ ອະນິມິດຕະວິໂມກແລະອັບປະນິຫິຕະວິໂມກ

[໒໐໗] ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າສູນຍະຕະວິໂມກແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າອະນິມິດຕະວິໂມກ ຯລຯ ອັບປະນິຫິຕະວິໂມກແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອັບປະນິຫິຕະວິໂມກ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອັບປະນິຫິຕະວິໂມກໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ສຸດທິກະສະມາທິ

## ສູນຍະຕະສະມາທິ ອະນິມິດຕະສະມາທິແລະອັບປະນິຫິຕະສະມາທິ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າສູນຍະຕະສະມາທິແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າອະນິມິດຕະສະມາທິ ຯລຯ ອັບປະນິຫິຕະສະມາທິແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອັບປະນິຫິຕະສະມາທິ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອັບປະນິຫິຕະສະມາທິໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ສຸດທິກະສະມາບັດ

## ສູນຍະຕະສະມາບັດ ອະນິມິດຕະສະມາບັດ ແລະ ອັບປະນິຫິຕະສະມາບັດ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າສູນຍະຕະສະມາບັດແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າອະນິມິດຕະສະມາບັດ ຯລຯ ອັບປະນິຫິຕະສະມາບັດແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອັບປະນິຫິຕະສະມາບັດ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອັບປະນິຫິຕະສະມາບັດໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ສຸດທິກະຍານທັດສະນະ

## ວິດຊາ ໓

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າວິດຊາ ໓ ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ວິດຊາ ໓ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດວິດຊາ ໓ ໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ສຸດທິກະມັກຄະພາວະນາ

ສະຕິປັດຖານ ໔ ສຳມັບປະທານ ໔ ແລະອິດທິບາດ ໔

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າສະຕິປັດຖານ ໔ ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າສຳມັບປະທານ ໔ ຯລຯ ອິດທິບາດ ໔ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອິດທິບາດ ໔ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອິດທິບາດ ໔ ໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ອິນຊີ ໕ ແລະພະລະ ໕

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າອິນຊີ ໕ ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າພະລະ ໕ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ພະລະ ໕ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າທຳພະລະ ໕ ໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ໂພດຊົງ ໗

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າໂພດຊົງ ໗ ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ໂພດຊົງ ໗ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດໂພດຊົງ ໗ ໃຫ້ແຈ້ງແລ້ວ ຯລຯ ຕ້ອງອາບັດປາຣາຊິກ ຯລຯ

## ອະຣິຍະມັກມີອົງ ໘

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າເຂົ້າອະຣິຍະມັກມີອົງ ໘ ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອະຣິ

ນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີ ແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໓໗)

## ເລື້ອງມັງສະປິນດະເຜດ ໑ ເລື້ອງ

## (ເຜດຮ່າງເປັນກ້ອນຊີ້ນ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມອອກມາ ມີອັນໃດ ເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມອອກມາເຊັ່ນນັ້ນ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນມັງສະປິນດະເຜດ ລອຍໃນອາກາດ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍ

ເຫັນມັງສະປີນດະເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດ ເກື້ອກູນຊໍ້າຍັງຈະເປັນທຸກຍາວນານ ແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນຄົນຂ້ານິກໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກນົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໖໘)

## ເລື້ອງນິດສະວິເຜດເພດຊາຍ ໑ ເລື້ອງ

## (ເຜດກາຍບໍ່ມີຜີວໜັງເພດຊາຍ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມອອກມາ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະ ຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງໃນທີ່ສົມຄວນເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມອອກມາ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນນິດສະວິເຜດເພດຊາຍລອຍໃນອາກາດ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍພາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນນິດສະວິເຜດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນຄົນຂ້າແກະໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໖໙)

## ເລື້ອງອະສິໂລມະເຜດເພດຊາຍ ໑ ເລື້ອງ

## (ເຜດກາຍມີຂົນເປັນດາບເພດຊາຍ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມອອກມາ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມອອກມາ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະ ຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມອອກມາ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນອະສິໂລມະເຜດເພດຊາຍ ລອຍໃນອາກາດ (ຂົນ) ດາບເຫຼົ່ານັ້ນຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງໃສ່ກາຍຂອງມັນເອງຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງ ບໍ່ເຄີຍພົບເຫັນ ເຄີຍຜາກົດທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ “ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ “ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນອະສີໂລມະເຜດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນຄົນຂ້າໝູໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຣົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ” (ເລື້ອງທີ ໔໐)

## ເລື້ອງສັດຕິໂລມະເຜດເພດຊາຍ ໑ ເລື້ອງ

## (ເຜດກາຍມີຂົນເປັນຫອກເພດຊາຍ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ “ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ” ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ “ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ” ພຣະມະຫາໂມກຄັນລານະຕອບວ່າ “ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ”

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ “ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ”

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນສັດຕິໂລມະເຜດເພດຊາຍລອຍໃນອາກາດ (ຂົນ) ຫອກເຫຼົ່ານັ້ນຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງໃສ່ກາຍຂອງມັນເອງຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕໍາໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທໍາ"

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນສັດຕິໂລມະເຜດເພດຊາຍນັ້ນ ແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊໍ້າຍັງຈະເປັນທຸກຍາວນານ ແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນພານລ່າເນື້ອໃນນະຄອນຣາຊະຄຶ ຍ້ອນຜົນກໍານັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກໍາທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໘໑)

## ເລື້ອງອຸສຸໂລມະເຜດເພດຊາຍ ໑ ເລື້ອງ

## (ເຜດກາຍມີຂົນເປັນລູກສອນເພດຊາຍ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນໍາກັນ" ພຣະລັກຂະນະຮັບຄໍາແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກໍາລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງ

ຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄືນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນອຸສຸໂລມະເຜດເພດຊາຍ ລອຍໃນອາກາດ (ຂົນ) ລູກສອນເຫຼົ່ານັ້ນຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງໃສ່ກາຍຂອງມັນເອງຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນອຸສຸໂລມະເຜດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນເພດຊະຄາດຢູ່ໃນນະຄອນຣາຊະຄື ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔໘)

## ເລື້ອງສູຈິໂລມະເຜດເພດຊາຍ ໑ ເລື້ອງ

## (ເຜດກາຍມີຂົນເປັນເຂັມເພດຊາຍ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄື ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄືນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນສູຈິໂລມະເຜດເພດຊາຍ ລອຍໃນອາກາດ (ຂົນ) ເຂັມເຫຼົ່ານັ້ນຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງໃສ່ກາຍຂອງມັນເອງຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນສູຈິໂລມະເຜດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນນາຍສາຣະຖີຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກໝົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔໓)

## ເລື້ອງສູຈະກະເຜດເພດຊາຍ ໑ ເລື້ອງ

## (ເຜດມີຮ່າງຖືກເຂັມໝຸດທີ່ມແທງພດຊາຍ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດ

ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະ ຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນ ອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງ ຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີ ອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນ ສູຈະກະເຜດເພດຊາຍ ລອຍໃນອາກາດ ເຂັມໝຸດເຫຼົ່ານັ້ນແທງເຂົ້າໃນຫົວຂອງມັນຊອດອອກ ທາງປາກ ແທງເຂົ້າໄປໃນປາກຊອດອອກທາງເອິກ ແທງເຂົ້າໃນເອິກຊອດອອກທາງທ້ອງ ແທງ ເຂົ້າໃນທ້ອງຊອດອອກທາງຂາອ່ອນທັງ ໒ ແທງເຂົ້າໃນຂາອ່ອນຊອດອອກທາງແຄ່ງທັງ ໒ ແທງເຂົ້າໃນແຄ່ງຊອດອອກທາງຕີນທັງ ໒ ຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າ ອັດສະຈັນຈິງບໍ່ເຄີຍຜາກົດທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນ ນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວ ອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍ ເຫັນສູຈະກະເຜດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດ ເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນຄົນເວົ້າສໍ່ ສຽດຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ ຕ້ອງອາບັດ" (ເລື້ອງທີ ໔໘)

## ເລື້ອງກຸມພັນດະເຜດ ໑ ເລື້ອງ

## (ເຜດມີອັນທະໃຫຍ່ເທົ່າໝໍ້)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາ ຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີ

ວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນກຸມພັນດະເຜດເພດຊາຍ ລອຍໃນອາກາດ ເມື່ອເຜດນັ້ນຍ່າງກໍຍົກອັນທະເຫຼົ່ານັ້ນຂຶ້ນພາດໄວ້ເທິງບ່າໄປ ເມື່ອນັ່ງກໍນັ່ງເທິງອັນທະເຫຼົ່ານັ້ນ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນກຸມພັນດະເຜດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນຜູ້ພິພາກສາໂກງຊາວບ້ານຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔໕)

## ເລື້ອງເຜດຈົມຊຸມຄູດເພດຊາຍ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ

ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດ ໄດ້ເຫັນເຜດຈົມຊຸມຄູດຈົນມິດຫົວ ເພດຊາຍ ລອຍໃນອາກາດ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດ ສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນເຜດຈົມຊຸມຄູດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນຊູ້ກັບພັນລະຍາຂອງຊາຍອື່ນຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔໙)

# ເລື້ອງເຜດກິນຄູດເພດຊາຍ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດ ໄດ້ເຫັນເຜດຜູ້ຈົມຊຸມຄູດຖ້ວມຫົວ ກຳລັງໃຊ້ມືທັງ ໒ ກອບຄູດກິນເພດຊາຍ ລອຍໃນອາກາດ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນເຜດກິນຄູດເພດຊາຍນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນພານຊົ່ວຮ້າຍຢູ່ໃນນະຄອນຣາຊະຄຶ

ຄັ້ງສາດສະໜາພຣະກັດສະປະສຳມາສຳພຸດທະເຈົ້າ ພານນັ້ນນິມົນພິກຂຸສົງສັນພັດຕາ ຫານແລ້ວເທຖູດລົງໃສ່ຮາງຈົນເຕັມ ສັ່ງໃຫ້ບອກເວລາອາຫານວ່າ ຂໍທ່ານຜູ້ຈະເລີນ ທັງຫຼາຍຈົ່ງ ສັນອາຫານ ແລະ ນຳໄປໃຫ້ພໍແກ່ຄວາມຕ້ອງການຈາກທີ່ນີ້ ຍ້ອນຜົນກຳນັ້ນຈຶ່ງຕົກນະຮົກນົກໄໝ້ ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີ ແລ້ວໄດ້ຮັບອັດຕະພາບເຊັ່ນນີ້ຍ້ອນເສດກຳນັ້ນ ໂມກຄັນ ລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔ກ)

## ເລື້ອງນິດສະວິເຜດເພດຍິງ ໑ ເລື້ອງ

## (ເຜດກາຍບໍ່ມີຜິວໜັງເພດຍິງ)

[໔໓໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອ ກະແຕ ເຂດນະຄອນຣາຊະຄື ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາ ຈະໄປບິນທະບາດໃນນະຄອນຣາຊະຄືນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງ ໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະ ຕອບວ່າ "ທ່ານລັກຂະນະ ຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄື ກັບຈາກບິນທະບາດ ຫຼັງຈາກສັນ ອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງ ຈາກພູເຂົາ ຄິດຊະກູດ ໃນນະຄອນຣາຊະຄືນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນ ນິດສະວິເຜດເພດຍິງ ລອຍໃນອາກາດ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດ ຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນ ຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວ ອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນນິດສະວິເຜດເພດແມ່ຍິງນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດແມ່ຍິງຕົນນັ້ນເຄີຍປະພຶດນອກໃຈສາມີຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔໗)

## ເລື້ອງມັງຄຸລິເຜດເພດຍິງ ໑ ເລື້ອງ

## (ເຜດຮູບຮ່າງໜ້າກຽດຊັງເພດຍິງ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນມັງຄຸລິເຜດ ກິ່ນເໝັນເພດຍິງລອຍໃນອາກາດ ຝູງແຮ້ງ ກາ ແຫຼວ ພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນມັງຄຸລີເຜດເພດແມ່ຍິງນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດແມ່ຍິງຕົນນັ້ນເຄີຍເປັນແມ່ມົດຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໔໗)

## ເລື້ອງໂອກິຣິນີເຜດເພດຍິງ ໑ ເລື້ອງ

## (ເຜດກາຍຖືກໄຟລວກເພດຍິງ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະ ຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໒ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງໃນທີ່ສົມຄວນເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດ ໄດ້ເຫັນໂອກິຣິນີເຜດເພດຍິງ ຖືກຖ່ານໄຟເຜົາຮອບຕົວຈົນສຸກ ກາຍເປັນຢົດນ້ຳໄຫຼຍ້ອຍລົງ ລອຍໃນ

ອາກາດ ມັນຮ້ອງຄວນຄາງ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເວີ່ນລົງຈິກຕອດຍາດກັນກິນ ເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍ ຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວ ອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍ ເຫັນໂອກີຣິນີເຜດເພດແມ່ຍິງນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດ ເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດແມ່ຍິງຕົນນັ້ນເຄີຍເປັນ ພຣະອັກຄະຣະມະເຫສີຂອງພຣະເຈົ້າກາລິງຄະ ນາງຂີ້ຫຶງເອົາກະທະມີຖ່ານໄຟໂຜະໃສ່ແມ່ຍິງຄູ່ ແຂ່ງ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດ ຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໐)

## ເລື້ອງກະພັນທະເຜດ ໑ ເລື້ອງ

## (ເຜດຫົວຂາດ)

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາ ຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີ ວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາ ຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງ ໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະ ຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນ ອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງ

ຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນກະພັນທະເຜດລອຍໃນອາກາດ ຕາແລະປາກຂອງມັນຢູ່ທີ່ເອິກ ຝູງແຮ້ງ ກາ ແຫຼວພາກັນບິນໄປມາເອີ່ນລົງຈິກຕອດຍາດກັນກິນເຜດນັ້ນສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນກະພັນທະເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນເພດຊະຄາດຂ້າໂຈນຊື່ທາມະຣິກຢູ່ໃນນະຄອນຣາຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຣົກມົກໄໝ້ຢູ່ຫຼາຍຮ້ອຍປີຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໑)

## ເລື້ອງນັກບວດເຮັດກຳຊົ່ວໃນສາດສະໜາຂອງພຣະພຸດທະເຈົ້າກັດສະປະ ໕ ເລື້ອງ

## ເລື້ອງເຜດມີຮູບເປັນພິກຂຸ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດ ໄດ້ເຫັນພິກຂຸເຜດລອຍໃນອາກາດ ສັງຄາຕິ ບາດ ປະຄົດເອວ ແລະຮ່າງກາຍຂອງມັນຖືກໄຟໄໝ້ລຸກຮຸ່ງຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນພິກຂຸເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານ ແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນພິກຂຸຊົ່ວໃນສາດສະໜາພຣະກັດສະປະສຳມາສຳພຸດທະເຈົ້າ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຣົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບເຊັ່ນນີ້ ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໔)

## ເລື້ອງເຜດມີຮູບເປັນພິກຂຸນີ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດ ໄດ້ເຫັນພິກຂຸນີເຜດລອຍໃນອາກາດ ສັງຄາຕິ ບາດ ປະຄົດເອວ ແລະຮ່າງກາຍຂອງມັນຖືກໄຟໄໝ້ລຸກຮຸ່ງ ຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນພິກຂຸນີເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນພິກຂຸນີຊົ່ວໃນສາດສະໜາພຣະກັດສະປະສຳມາສຳພຸດທະເຈົ້າ ຍ້ອນຜົນກຳນັ້ນຈຶ່ງຕົກນະຣົກມົກໄໝ້ຢູ່ຫຼາຍຮ້ອຍປີຫຼາຍພັນປີ ຫຼາຍແສນປີແລ້ວໄດ້ຮັບອັດຕະພາບເຊັ່ນນີ້ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໓)

## ເລື້ອງເຜດມີຮູບເປັນສິກຂະມານາ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄື ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄືນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດ ໄດ້ເຫັນ ສິກຂະມານາເຜດ ລອຍໃນອາກາດ ສັງຄາຕິ ບາດ ປະຄົດເອວ ແລະຮ່າງກາຍຂອງມັນຖືກໄຟໄໝ້ລຸກຮຸ່ງ ຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນສິກຂະມານາເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນສິກຂະມານາຊົ່ວໃນສາດສະໜາພຣະກັດສະປະສຳມາສຳພຸດທະເຈົ້າ ຍ້ອນຜົນກຳນັ້ນຈຶ່ງຕົກນະຣົກມົກໄໝ້ຢູ່ຫຼາຍຮ້ອຍປີຫຼາຍພັນປີ ຫຼາຍແສນປີແລ້ວໄດ້ຮັບອັດຕະພາບເຊັ່ນນີ້ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໔)

## ເລື້ອງເຜດມີຮູບເປັນສາມະເນນ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄື ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄືນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນສາມະເນນເຜດ ລອຍໃນອາກາດ ສັງຄາຕິ ບາດ ປະຄົດເອວ ແລະຮ່າງກາຍຂອງມັນຖືກໄຟໄໝ້ລຸກຮຸ່ງ ຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນສາມະເນນເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນ ສາມະເນນຊົ່ວໃນສາດສະໜາພຣະກັດສະປະສຳມາສຳພຸດທະເຈົ້າ ຍ້ອນຜົນກຳນັ້ນຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ຮັບອັດຕະພາບເຊັ່ນນີ້ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໕)

## ເລື້ອງເຜດມີຮູບເປັນສາມະເນຣີ ໑ ເລື້ອງ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະລັກຂະນະກັບພຣະມະຫາໂມກຄັນລານະພັກຢູ່ທີ່ພູເຂົາຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປຫາພຣະລັກຂະນະຈົນເຖິງທີ່ຢູ່ ເຊີນຊວນວ່າ "ທ່ານລັກຂະນະ ມາເທີ້ນ ພວກເຮົາຈະໄປບິນທະບາດໃນນະຄອນຣາຊະຄຶນຳກັນ" ພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ພຣະມະຫາໂມກຄັນລານະກຳລັງລົງຈາກພູເຂົາຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ພຣະລັກຂະນະຖາມວ່າ "ທ່ານໂມກຄັນລານະ ມີອັນໃດເປັນເຫດເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ" ພຣະມະຫາໂມກຄັນລານະຕອບວ່າ "ທ່ານລັກຂະນະຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ"

ເມື່ອທ່ານທັງ ໔ ທ່ຽວບິນທະບາດໃນນະຄອນຣາຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນອາຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງລົງ ໃນທີ່ສົມຄວນ ເມື່ອແລ້ວພຣະລັກຂະນະໄດ້ກ່າວຂຶ້ນວ່າ "ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູເຂົາຄິດຊະກູດ ໃນນະຄອນຣາຊະຄຶນີ້ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ມີອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ"

ພຣະມະຫາໂມກຄັນລານະຕອບວ່າ "ທ່ານ ເມື່ອຂ້ານ້ອຍລົງຈາກພູເຂົາຄິດຊະກູດໄດ້ເຫັນສາມະເນຣເຜດ ລອຍໃນອາກາດ ສັງຄາຕິ ບາດ ປະຄົດເອວ ແລະຮ່າງກາຍຂອງມັນຖືກໄຟໄໝ້ລຸກຮຸ່ງ ຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ທີ່ມີສັດເຊັ່ນນີ້ ມີຍັກເຊັ່ນນີ້ ມີເຜດເຊັ່ນນີ້ ມີການໄດ້ອັດຕະພາບເຊັ່ນນີ້ຢູ່"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະມະຫາໂມກຄັນລານະກ່າວອວດອຸດຕະຣິມະນຸດສະທຳ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍສາວົກທັງຫຼາຍທີ່ມີຈັກຂຸຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ເມື່ອກ່ອນເຮົາກໍເຫັນສາມະເນຣເຜດນັ້ນແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນຊ້ຳຍັງຈະເປັນທຸກຍາວນານ ແກ່ຜູ້ທີ່ບໍ່ເຊື່ອເຮົາ ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນສາມະເນຣຊົ່ວໃນສາດສະໜາພຣະກັດສະປະສຳມາສຳພຸດທະເຈົ້າ ຍ້ອນຜົນກຳນັ້ນຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍຮ້ອຍປີຫຼາຍພັນປີ ຫຼາຍແສນປີແລ້ວໄດ້ຮັບອັດຕະພາບເຊັ່ນນີ້ຍ້ອນເສດກຳທີ່ຍັງເຫຼືອ ໂມກຄັນລານະກ່າວຈິງຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໖)

## ເລື້ອງແມ່ນ້ຳຕະໂປທາ ໑ ເລື້ອງ

[໔໘໑] ສະໄໝນັ້ນ ພຣະມະຫາໂມກຄັນລານະຮຽກພິກຂຸທັງຫຼາຍມາບອກວ່າ "ທ່ານທັງຫຼາຍ ແມ່ນ້ຳຕະໂປທານີ້ໄຫຼມາຈາກສະນ້ຳທີ່ໃສເຢັນຈືດສະນິດສະອາດມີທ່າພຽງໜ້າຣື່ນຣົມ ມີຝູງປາ ແລະເຕົ່າອາໄສຢູ່ຫຼາຍ ມີດອກບົວຂະໜາດເທົ່າວົງລໍ້ບານຢູ່ ແຕ່ເຖິງປານນັ້ນແມ່ນ້ຳຕະໂປທາກໍຍັງຄົງຮ້ອນເດືອດພົດໄຫຼໄປ"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະມະຫາໂມກຄັນລານະເວົ້າແນວນັ້ນນໍ ທ່ານກ່າວອວດອຸດຕະຣິມະນຸດສະທຳ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ແມ່ນ້ຳຕະໂປທາໄຫຼຜ່ານມາລະຫວ່າງມະຫານະຮົກ ໔ ຂຸມ ດັ່ງນັ້ນຈຶ່ງຄົງເດືອດພົດໄຫຼໄປ ໂມກຄັນລານະກ່າວຈິງ ບໍ່ຕ້ອງອາບັດ" (ເລື້ອງທີ ໕໗)

## ເລື້ອງການສູ້ຮົບໃນນະຄອນຣາຊະຄຶ ໑ ເລື້ອງ

ສະໄໝນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ເຮັດສົງຄາມກັບພວກເຈົ້າລິດສະຫວີ ແລ້ວພ່າຍແພ້ ພາຍຫຼັງພຣະອົງຊົງຣະດົມພົນຍົກໄປຮົບຈົນໄດ້ໄຊຊະນະ ໃຫ້ຕີກອງປະກາດໄຊຊະນະໃນການສົງຄາມວ່າ "ພຣະຣາຊາຊົງຊະນະພວກເຈົ້າລິດສະຫວີ"

ລຳດັບນັ້ນພຣະມະຫາໂມກຄັນລານະຮຽກພິກຂຸທັງຫຼາຍມາບອກວ່າ "ທ່ານທັງຫຼາຍ ພຣະເຈົ້າແຜ່ນດິນຊົງພ່າຍແພ້ພວກເຈົ້າລິດສະຫວີ ແຕ່ເຂົາຕີກອງປະກາດໄຊຊະນະໃນການສົງຄາມວ່າ "ພຣະຣາຊາຊົງຊະນະພວກເຈົ້າລິດສະຫວີ"

ພິກຂຸພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະມະຫາໂມກຄັນລານະກ່າວແນວນັ້ນນໍ ທ່ານກ່າວອວດອຸດຕະຣິມະນຸດສະທຳ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຄັ້ງທຳອິດພຣະເຈົ້າແຜ່ນດິນຊົງພ່າຍແພ້ພວກເຈົ້າລິດສະຫວີ ພາຍຫຼັງພຣະອົງຊົງຣະດົມພົນຍົກໄປຮົບຈົນໄດ້ໄຊຊະນະ ໂມກຄັນລານະກ່າວຈິງ ບໍ່ຕ້ອງອາບັດ" (ເລື້ອງທີ ໕໗)

## ເລື້ອງໄດ້ຍິນສຽງຊ້າງລົງນ້ຳ ໑ ເລື້ອງ

[໔໓໔] ສະໄໝນັ້ນ ພຣະມະຫາໂມກຄັນລານະຮຽກພິກຂຸທັງຫຼາຍມາບອກວ່າ "ທ່ານທັງຫຼາຍ ຂ້ານ້ອຍເຂົ້າອາເນນຊະສະມາທິທີ່ຝັ່ງແມ່ນ້ຳສັບປິນິກາໃນເຂດນີ້ ໄດ້ຍິນສຽງຝູງຊ້າງລົງນ້ຳແລ້ວຂຶ້ນຈາກນ້ຳສົ່ງສຽງດັງເໝືອນນົກກະຮຽນ"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະມະຫາໂມກຄັນລານະກ່າວແນວນັ້ນນໍ ທ່ານກ່າວອວດອຸດຕະຣິມະນຸດສະທຳ" ແລ້ວນຳເລື້ອງນີ້ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ສະມາທິນັ້ນມີຢູ່ຈິງ ແຕ່ຍັງບໍ່ບໍລິສຸດ ໂມກຄັນລານະກ່າວຈິງ ຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໕໘)

## ເລື້ອງພຣະອະຣະຫັນໂສພິຕະລະນຶກຊາດໄດ້ ໕໐໐ ກັບ ໑ ເລື້ອງ

ຄັ້ງນັ້ນ ພຣະໂສພິຕະບອກຮຽກພິກຂຸທັງຫຼາຍມາວ່າ "ຂ້ານ້ອຍລະນຶກຊາດໄດ້ ໕໐໐ ກັບ"

ພິກຂຸທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະໂສພິຕະ ກ່າວແນວນັ້ນນໍ ທ່ານກ່າວອວດອຸດຕະຣິມະນຸດສະທຳ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຊາດໃນອະດີດຂອງໂສພິຕະພິກຂຸນັ້ນມີຢູ່ ແຕ່ມີພຽງຊາດດຽວເທົ່ານັ້ນ ໂສພິຕະກ່າວຈິງ ຈຶ່ງບໍ່ຕ້ອງອາບັດ" (ເລື້ອງທີ ໓໐)

**ປາຣາຊິກສິກຂາບົດທີ ໔ ຈົບ**

## ບົດສະຫຼຸບ

[໔໓໓] ທ່ານທັງຫຼາຍ ທຳ ໔ ຄືປາຣາຊິກ ໔ ສິກຂາບົດຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ແຕ່ລະຂໍ້ ໆ ເຊິ່ງພິກຂຸຕ້ອງເຂົ້າແລ້ວ ຍ່ອມຢູ່ຮ່ວມກັບພິກຂຸທັງຫຼາຍບໍ່ໄດ້ ເປັນປາຣາຊິກ ຫາສັງວາດບໍ່ໄດ້ ເໝືອນກ່ອນບວດ

ຂ້າພະເຈົ້າຂໍຖາມທ່ານທັງຫຼາຍໃນທຳ ຄື ປາຣາຊິກ ໔ ສິກຂາບົດນັ້ນວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ທ່ານທັງຫຼາຍບໍລິສຸດແລ້ວໃນທຳຄືປາຣາຊິກ ໔ ສິກຂາບົດນີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ປາຣາຊິກ ຈົບ**

## ລວມສິກຂາບົດທີ່ມີໃນປາຣາຊິກກັນ

## ປາຣາຊິກກັນມີ ໔ ສິກຂາບົດ ຄື

໑. ປາຣາຊິກສິກຂາບົດທີ ໑ ວ່າດ້ວຍການເສບເມຖຸນທຳ
໒. ປາຣາຊິກສິກຂາບົດທີ ໒ ວ່າດ້ວຍການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້
໓. ປາຣາຊິກສິກຂາບົດທີ ໓ ວ່າດ້ວຍການພາກກາຍມະນຸດ
໔. ປາຣາຊິກສິກຂາບົດທີ ໔ ວ່າດ້ວຍການກ່າວອວດອຸດຕະຣິມະນຸດສະທຳ

ສິກຂາບົດເຫຼົ່ານີ້ເປັນທີ່ຕັ້ງແຫ່ງການຕັດຮາກເຫງົ້າ ຢ່າງບໍ່ຕ້ອງສົງໄສ

**ປາຣາຊິກກັນ ຈົບ**

# ໔. ສັງຄາທິເສສະກັນ

ທ່ານທັງຫຼາຍ ທຳຄືສັງຄາທິເສດ ໑໓ ສິກຂາບົດເຫຼົ່ານີ້ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ

# ໑. ສຸກກະວິສັດຖິສິກຂາບົດ

## ວ່າດ້ວຍການຈົງໃຈເຮັດໃຫ້ນ້ຳອະສຸຈິເຄື່ອນ

### ເລື້ອງພຣະໄສຍະສະກະ

[໔໓໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະໄສຍະສະກະບໍ່ຍິນດີທີ່ຈະປະພຶດພົມມະຈັນ ຍ້ອນຄວາມບໍ່ຍິນດີນັ້ນ ທ່ານຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ

ພຣະອຸທາຍີເຫັນທ່ານພຣະໄສຍະສະກະຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຈຶ່ງໄດ້ກ່າວກັບທ່ານວ່າ “ທ່ານໄສຍະສະກະ ເປັນຫຍັງ ທ່ານຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງນໍ ຄົງບໍ່ຍິນດີທີ່ຈະປະພຶດພົມມະຈັນແລ້ວແມ່ນບໍ?”

ທ່ານພຣະໄສຍະສະກະຮັບວ່າເປັນແນວນັ້ນ

ພຣະອຸທາຍີແນະນຳວ່າ “ຖ້າເປັນແນວນັ້ນ ທ່ານຈົ່ງສັນອາຫານຕາມຕ້ອງການ ນອນອາບນ້ຳຕາມຕ້ອງການເທີ້ນ ເມື່ອແລ້ວຖ້າທ່ານເກີດຄວາມກະສັນຖືກຣາຄະລົບກວນຈິດຂຶ້ນມາ ກໍຈົ່ງໃຊ້ມືພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ”

“ເຮັດເຊັ່ນນີ້ຈະສົມຄວນບໍ ຂ້ານ້ອຍ?”

“ທ່ານ ເຮັດເຊັ່ນນັ້ນເປັນການສົມຄວນ ແມ່ນເຮົາເອງກໍເຮັດເຊັ່ນນັ້ນຄືກັນ”

ເມື່ອທ່ານພຣະໄສຍະສະກະສັນອາຫານ ນອນ ອາບນ້ຳຕາມຕ້ອງການແລ້ວ ໄດ້ເກີດຄວາມກະສັນຖືກຣາຄະລົບກວນຈິດຂຶ້ນມາ ກໍໄດ້ໃຊ້ມືພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ເວລາຕໍ່ມາ ທ່ານມີຜິວພັນຜ່ອງໃສ ແນມເບິ່ງອິ່ມເອີບ ເພື່ອນພິກຂຸຖາມທ່ານວ່າ “ທ່ານໄສຍະສະກະ ເມື່ອກ່ອນ ທ່ານຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ມີເສັ້ນເອັນຂຶ້ນສະພັ່ງ ແຕ່ເວລານີ້ ກັບມີຜິວພັນຜ່ອງໃສ ແນມເບິ່ງອິ່ມເອີບ ທ່ານໃຊ້ຢາອັນໃດຢູ່ບໍ?”

ພຣະໄສຍະສະກະຕອບວ່າ “ບໍ່ໄດ້ໃຊ້ຢາອັນໃດ ແຕ່ເຮົາສັນອາຫານຕາມຕ້ອງການ ນອນອາບນ້ຳຕາມຕ້ອງການ ເມື່ອເກີດຄວາມກະສັນຖືກຣາຄະລົບກວນຈິດຂຶ້ນມາ ກໍໃຊ້ມືພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ”

"ທ່ານໃຊ້ມີປັ້ນເຂົ້າທີ່ເຂົາຖວາຍດ້ວຍສັດທາ ພະຍາຍາມເຮັດໃຫ້ນ້ຳອະສຸຈິໃຫ້ເຄື່ອນອອກມາແມ່ນບໍ?"

ພຣະໄສຍະສະກະຮັບວ່າ "ແມ່ນ ຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະໄສຍະສະກະ ຈຶ່ງໃຊ້ມືພະຍາຍາມເຮັດໃຫ້ນ້ຳອະສຸຈິໃຫ້ເຄື່ອນອອກແນວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິພຣະໄສຍະສະກະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະໄສຍະສະກະວ່າ "ທ່ານໃຊ້ມືພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ແມ່ນບໍ?" ພຣະໄສຍະສະກະທູນຮັບວ່າ "ຈິງ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ  ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ບໍ່ຄວນເຮັດເລີຍ ເປັນຫຍັງທ່ານຈຶ່ງໃຊ້ມືພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນນໍ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ເພື່ອຄວາມພາກ ບໍ່ແມ່ນເພື່ອຄວາມປະກອບໄວ້ ເພື່ອຄວາມບໍ່ຖືໝັ້ນ ບໍ່ແມ່ນເພື່ອຄວາມຖືໝັ້ນ ບໍ່ແມ່ນບໍ? ເມື່ອເຮົາສະແດງທຳເພື່ອຄາຍຄວາມກຳໜັດ ທ່ານກໍຍັງຈະຄິດເພື່ອຄວາມກຳໜັດ ເຮົາສະແດງທຳເພື່ອຄວາມພາກ ທ່ານກໍຍັງຄິດເພື່ອຄວາມປະກອບໄວ້ ເຮົາສະແດງທຳເພື່ອຄວາມບໍ່ຖືໝັ້ນ ທ່ານກໍຍັງຈະຄິດເພື່ອຄວາມຖືໝັ້ນ ໂມຄະບຸຣຸດ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອສຳຣອກຣາຄະເພື່ອສວ່າງຄວາມເມົາ ເພື່ອດັບຄວາມກະຫາຍ ເພື່ອຖອນຄວາມອາໄລ ເພື່ອຕັດວັດຕະ ເພື່ອຄວາມສິ້ນຕັນຫາ ເພື່ອຄາຍຄວາມກຳໜັດ ເພື່ອດັບທຸກ ເພື່ອນິບພານ ບໍ່ແມ່ນບໍ? ໂມຄະບຸຣຸດເຮົາບອກການລະກາມ ການກຳນົດຮູ້ຄວາມສຳຄັນໃນກາມ ການກຳຈັດຄວາມກະຫາຍໃນກາມການເພີກຖອນຄວາມນຶກໃນກາມ ການລະງັບຄວາມກັດກຸ້ມຍ້ອນກາມໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ"

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິພຣະໄສຍະສະກະໂດຍປະການຕ່າງ ໆ ແລ້ວ ໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ບຳລຸງຍາກ ຯລຯ ຕັດຄຸນແຫ່ງຄວາມເປັນຄົນລ້ຽງງ່າຍບຳລຸງງ່າຍ ຯລຯ ຊົງສະແດງທຳມີກະຖາໃຫ້ເໝາະສົມໃຫ້ຄ້ອຍຕາມກັບເລື້ອງນັ້ນ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

## ພິກຂຸ ຈົງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ ເປັນສັງຄາທິເສດ

ສິກຂາບົດນີ້ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວ ແນວນີ້

### ເລື້ອງພຣະໄສຍະສະກະ ຈົບ

## ເລື້ອງພິກຂຸຫຼາຍອົງ

[໒໓໕] ສະໄໝນັ້ນ ພິກຂຸທັງຫຼາຍສັນອາຫານອັນປະນີດ ນອນຫຼັບ ຂາດສະຕິສຳປະຊັນຍະ ນ້ຳອະສຸຈິອອກມາຍ້ອນຄວາມຝັນ ພວກທ່ານເກີດຄວາມກັງວົນໃຈວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ "ພິກຂຸຈົງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ ເປັນສັງຄາທິເສດ" ແຕ່ພວກເຮົາມີນ້ຳອະສຸຈິອອກມາຍ້ອນຄວາມຝັນ ໃນຄວາມຝັນນັ້ນມີເຈຕະນາ ພວກເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸທັງຫຼາຍ ເຈຕະນານັ້ນມີຢູ່ ແຕ່ບໍ່ຄວນກ່າວວ່າມີ"

(ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາ ຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຕັດຮຽກພິກຂຸທັງຫຼາຍມາ) ຯລຯ ຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

### [໒໓໖] ພິກຂຸຈົງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ ເປັນສັງຄາທິເສດ ເວັ້ນໄວ້ແຕ່ຝັນ

### ເລື້ອງພິກຂຸຫຼາຍອົງ ຈົບ

## ສິກຂາບົດວິພັງ

[໒໓໗] ຄຳວ່າ ຈົງໃຈ ຄວາມວ່າ ຮູ້ຢູ່ ຮູ້ດີຢູ່ ຈົງໃຈ ຝ່າຝືນລ່ວງລະເມີດ

ຄຳວ່າ ນ້ຳອະສຸຈິ ອະທິບາຍວ່າ ນ້ຳອະສຸຈິມີ ໑໐ ຊະນິດ ຄື (໑) ອະສຸຈິສີຂຽວ (໒) ອະສຸຈິສີເຫຼືອງ (໓) ອະສຸຈິສີແດງ (໔) ອະສຸຈິສີຂາວ (໕) ອະສຸຈິສີເໝືອນນ້ຳມັນງົວ (໖) ອະສຸຈິສີເໝືອນນ້ຳທ່າ (໗) ອະສຸຈິສີເໝືອນນ້ຳມັນ (໘) ອະສຸຈິສີເໝືອນນົມສົດ (໙) ອະສຸຈິສີເໝືອນນົມສົ້ມ (໑໐) ອະສຸຈິສີເໝືອນເນີຍໄສ

ຄຳວ່າ ເຮັດໃຫ້ເຄື່ອນ ຄື ກິຣິຍາທີ່ເຮັດໃຫ້ເຄື່ອນຈາກຖານ ຕັດຮຽກວ່າ ເຮັດໃຫ້ເຄື່ອນ

ຄຳວ່າ ຍົກເວັ້ນໄວ້ແຕ່ຝັນ ຄື ຍົກເວັ້ນຄວາມຝັນ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ດຶງເຂົ້າຫາອາບັດເກົ່າ ໃຫ້ມານັດແລະຮຽກເຂົ້າໝູ່ ຄະນະກໍເຮັດບໍ່ໄດ້ ພິກຂຸອົງດຽວກໍເຮັດບໍ່ໄດ້ ດັ່ງນັ້ນຈຶ່ງຕັດວ່າ "ເປັນສັງຄາທິເສດ"

ຄຳວ່າ "ເປັນສັງຄາທິເສດ" ນີ້ ເປັນການຂະໜານນາມ ເປັນຄຳຮຽກໝວດອາບັດນັ້ນ ໆ ເອງໂດຍອ້ອມ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ "ເປັນສັງຄາທິເສດ"

## ບົດພາຊະນີ

## ອຸບາຍ ໔ ປະການ

(໑) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນໃນຮູບພາຍໃນ (໒) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນໃນຮູບພາຍນອກ (໓) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນໃນຮູບພາຍໃນ ແລະ ພາຍນອກ (໔) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເມື່ອຮ່ອນແອວໃນອາກາດ

## ການ ໕

(໑) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເມື່ອເກີດຄວາມກຳໜັດ (໒) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເມື່ອປວດອຸດຈາຣະ (໓) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເມື່ອປວດປັດສາວະ (໔) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເມື່ອຕ້ອງລົມ (໕) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເມື່ອຖືກບົ້ງຂົບ

## ເຈຕະນາ ໑໐ ປະການ

(໑) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອຄວາມຫາຍໂຣກ (໒) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອຄວາມສຸກ (໓) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອເປັນຢາ (໔) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອເປັນທານ (໕) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອເປັນບຸນ (໖) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອບູຊາຍັນ (໗) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອຈະໄປສະຫວັນ (໘) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອສືບພັນ (໙) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອທົດລອງ (໑໐) ພິກຂຸເຮັດນ້ຳອະສຸຈິໃຫ້ເຄື່ອນເພື່ອຄວາມສະນຸກ

## ວັດຖຸທີ່ປະສົງ ໑໐ ປະການ

(໑) ພິກຂຸເຮັດນ້ຳອະສຸຈິສີຂຽວໃຫ້ເຄື່ອນ (໒) ພິກຂຸເຮັດນ້ຳອະສຸຈິສີເຫຼືອງໃຫ້ເຄື່ອນ (໓) ພິກຂຸເຮັດນ້ຳອະສຸຈິສີແດງໃຫ້ເຄື່ອນ (໔) ພິກຂຸເຮັດນ້ຳອະສຸຈິສີຂາວໃຫ້ເຄື່ອນ (໕) ພິກຂຸເຮັດນ້ຳອະສຸຈິສີ ເໝືອນນ້ຳມັນງົວໃຫ້ເຄື່ອນ (໖) ພິກຂຸເຮັດນ້ຳອະສຸຈິສີເໝືອນນ້ຳທ່າໃຫ້ເຄື່ອນ (໗) ພິກຂຸເຮັດນ້ຳອະສຸຈິສີເໝືອນນ້ຳມັນໃຫ້ເຄື່ອນ (໘) ພິກຂຸເຮັດນ້ຳອະສຸຈິສີເໝືອນນົມສົດໃຫ້ເຄື່ອນ (໙)

ພິກຂຸເຮັດນ້ຳອະສຸຈິສີເໝືອນນົມສົ້ມໃຫ້ເຄື່ອນ (໑໐) ພິກຂຸເຮັດນ້ຳອະສຸຈິສີເໝືອນເນີຍໄສໃຫ້ເຄື່ອນ

[໔໓໗] ຄຳວ່າ ໃນຮູບພາຍໃນ ໄດ້ແກ່ ຮູບທີ່ມີວິນຍານຄອງໃນຕົວ

ຄຳວ່າ ໃນຮູບພາຍນອກ ໄດ້ແກ່ ຮູບທີ່ມີວິນຍານຄອງ ຫຼື ທີ່ບໍ່ມີວິນຍານຄອງນອກຕົວ

ຄຳວ່າ ໃນຮູບພາຍໃນແລະພາຍນອກ ໄດ້ແກ່ ຮູບທັງ ໔ ນັ້ນ

ຄຳວ່າ ເມື່ອຮ່ອນແອວໃນອາກາດ ໝາຍຄວາມວ່າ ເມື່ອພິກຂຸພະຍາຍາມໃນອາກາດ ອົງຄະ ຊາດໃຊ້ການໄດ້

ຄຳວ່າ ເມື່ອເກີດຄວາມກຳໜັດ ຄື ເມື່ອຖືກຄວາມກຳໜັດລົບກວນອົງຄະຊາດໃຊ້ການໄດ້

ຄຳວ່າ ເມື່ອປວດອຸດຈາຣະ ຄື ເມື່ອປວດອຸດຈາຣະ ອົງຄະຊາດໃຊ້ການໄດ້

ຄຳວ່າ ເມື່ອປວດປັດສາວະ ຄື ເມື່ອປວດປັດສາວະ ອົງຄະຊາດໃຊ້ການໄດ້

ຄຳວ່າ ເມື່ອຕ້ອງລົມ ຄື ເມື່ອຖືກລົມລຳເພີຍ ອົງຄະຊາດໃຊ້ການໄດ້

ຄຳວ່າ ເມື່ອຖືກບົ້ງຂົນ ຄື ເມື່ອຖືກບົ້ງຂົນບຽດບຽນແລ້ວ ອົງຄະຊາດໃຊ້ການໄດ້

[໔໓໘] ຄຳວ່າ ເພື່ອຄວາມຫາຍໂຣກ ຄື ມຸ້ງວ່າຈະເປັນຜູ້ບໍ່ມີໂຣກ

ຄຳວ່າ ເພື່ອຄວາມສຸກ ຄື ມຸ້ງວ່າຈະໃຫ້ເກີດສຸກຂະເວທະນາ

ຄຳວ່າ ເພື່ອເປັນຢາ ຄື ມຸ້ງວ່າຈະເປັນຢາ

ຄຳວ່າ ເພື່ອເປັນທານ ຄື ມຸ້ງວ່າຈະໃຫ້ທານ

ຄຳວ່າ ເພື່ອເປັນບຸນ ຄື ມຸ້ງວ່າຈະເປັນບຸນ

ຄຳວ່າ ເພື່ອບູຊາຍັນ ຄື ມຸ້ງວ່າຈະບູຊາຍັນ

ຄຳວ່າ ເພື່ອຈະໄປສະຫວັນ ຄື ມຸ້ງວ່າຈະໄດ້ໄປສະຫວັນ

ຄຳວ່າ ເພື່ອສືບພັນ ຄື ມຸ້ງວ່າຈັກສືບພັນ

ຄຳວ່າ ເພື່ອທົດລອງ ຄື ທົດລອງວ່າ ນ້ຳອະສຸຈິຈັກເປັນສີຂຽວ ນ້ຳອະສຸຈິຈັກເປັນສີເຫຼືອງ ນ້ຳອະສຸຈິຈັກເປັນສີແດງ ນ້ຳອະສຸຈິຈັກເປັນສີຂາວ ນ້ຳອະສຸຈິຈັກເປັນສີເໝືອນນ້ຳມັນງົວ ນ້ຳອະສຸຈິຈັກເປັນສີເໝືອນນ້ຳທ່າ ນ້ຳອະສຸຈິຈັກເປັນສີເໝືອນນ້ຳມັນ ນ້ຳອະສຸຈິຈັກເປັນສີເໝືອນນົມສົດ ນ້ຳອະສຸຈິຈັກເປັນສີເໝືອນນົມສົ້ມ ນ້ຳອະສຸຈິຈັກເປັນສີເໝືອນເນີຍໄສ

ຄຳວ່າ ເພື່ອຄວາມສະນຸກ ຄື ມີຄວາມປະສົງຈະຫຼິ້ນ

## ສຸດທິກະສັງຄາທິເສດ

## ອຸບາຍເຮັດໃຫ້ນ້ຳອະສຸຈິເຄື່ອນ ໔ ຢ່າງ

[໔໔໐] (໑) ພິກຂຸຈົງໃຈພະຍາຍາມໃນຮູບພາຍໃນ ນ້ຳອະສຸຈິເຄື່ອນ ຕ້ອງອາບັດສັງຄາທິເສດ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງສອດອົງຄະຊາດເຂົ້າໃນຕົມ ແຕ່ນ້ຳອະສຸຈິບໍ່ເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໓)

## ເລື້ອງພິກຂຸເອົານ້ຳທີດອົງຄະຊາດ ໓ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເອົານ້ຳທີດອົງຄະຊາດ ນ້ຳອະສຸຈິເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ບໍ່ຕ້ອງອາບັດ" (ເລື້ອງທີ ໗໔)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງເອົານ້ຳທີດອົງຄະຊາດ ນ້ຳອະສຸຈິເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໗໕)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງເອົານ້ຳທີດອົງຄະຊາດ ແຕ່ນ້ຳອະສຸຈິບໍ່ເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗໖)

## ເລື້ອງພິກຂຸສຽດສີອົງຄະຊາດເທິງທີ່ນອນ ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງສຽດສີອົງຄະຊາດເທິງທີ່ນອນ ນ້ຳອະສຸຈິເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຂ້ານ້ອຍ" "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໗໗)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງສຽດສີ ອົງຄະ

ຊາດເທິງທີ່ນອນ ແຕ່ນ້ຳອະສຸຈິບໍ່ເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຄິດແນວໃດ" "ຂ້າພຣະອົງ ມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໖໗)

## ເລື້ອງພິກຂຸສຽດສີອົງຊາດກັບນິ້ວຫົວໂປ້ມື ໔ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງສຽດສີອົງຄະຊາດກັບນິ້ວຫົວໂປ້ມື ນ້ຳອະສຸຈິເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖໙)

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມປະສົງຈະເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງສຽດສີອົງຄະຊາດກັບນິ້ວຫົວໂປ້ມື ແຕ່ນ້ຳອະສຸຈິບໍ່ເຄື່ອນ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ"(ເລື້ອງທີ ໗໐)

**ສຸກກະວິສັດຖິສິກຂາບົດທີ ໑ ຈົບ**

# ໔. ກາຍະສັງສັກຄະສິກຂາບົດ

## ວ່າດ້ວຍການຈັບຕ້ອງກາຍກັບມາຕຸຄາມ

### ເລື້ອງພຣະອຸທາຍີ

[໔໖໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະອຸທາຍີຢູ່ໃນປ່າ ວິຫານຂອງທ່ານສວຍງາມ ໜ້າເບິ່ງ ໜ້າຊົມ ຫ້ອງກາງມີລະບຽງຮອບດ້ານ ຈັດຕຽງ ຕັ່ງ ຟູກ ໝອນໄວ້ຮຽບຮ້ອຍ ຕັ້ງນ້ຳສັນນ້ຳໃຊ້ໄວ້ພ້ອມ ບໍລິເວນວິຫານກ້ຽງສະອາດ ຊາວບ້ານຈຳນວນຫຼາຍພາກັນມາຊົມວິຫານຂອງທ່ານ ພາມຄົນໜຶ່ງກັບພັນລະຍາເຂົ້າໄປຫາພຣະອຸທາຍີເຖິງທີ່ຢູ່ ຂາບຮຽນວ່າ "ພວກຂ້າພະເຈົ້າຢາກຊົມວິຫານຂອງຄູບາ" ພຣະອຸທາຍີຕອບວ່າ "ພາມ ຖ້າເຊັ່ນນັ້ນເຊີນຊົມເທີ້ນ" ແລ້ວຖືລູກກຸນແຈໄຂປະຕູເຂົ້າໄປສູ່ວິຫານ

ພາມຍ່າງຕາມຫຼັງພຣະອຸທາຍີເຂົ້າໄປ ສ່ວນພັນລະຍາກໍຍ່າງຕາມຫຼັງພາມເຂົ້າໄປ

ໃນຂະນະນັ້ນ ພຣະອຸທາຍີຍ່າງໄປເປີດປິດໜ້າຕ່າງບາງບານ ວຽນຮອບຫ້ອງແລ້ວຍ້ອນມາຂ້າງຫຼັງ ໄດ້ຈັບຕ້ອງອະໄວຍະວະນ້ອຍໃຫຍ່ຂອງນາງພາມມະນີ

ຄັ້ງນັ້ນ ພາມນັ້ນໄດ້ຊື່ນຊົມຍິນດີກັບພຣະອຸທາຍີແລ້ວກັບໄປ ເມື່ອກັບໄປແລ້ວ ພາມໄດ້ເປ່ງວາຈາອອກມາດ້ວຍຄວາມດີໃຈວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດທີ່ຢູ່ໃນປ່າເຊັ່ນນີ້ມີອັດທະຍາໄສກວ້າງຂວາງ ແມ່ນພຣະອຸທາຍີຜູ້ຈະເລີນທີ່ຢູ່ໃນປ່າເຊັ່ນນີ້ກໍມີອັດທະຍາໄສກວ້າງຂວາງ"

ເມື່ອພາມກ່າວແນວນີ້ ນາງພາມມະນີຈຶ່ງບອກກັບພາມວ່າ "ພຣະອຸທາຍີນັ້ນ ຈະມີອັດທະຍາໄສກວ້າງຂວາງມາແຕ່ໃສກັນ ພຣະສະມະນະອຸທາຍີຈັບຕ້ອງອະໄວຍະວະນ້ອຍໃຫຍ່ຂອງເຮົາເໝືອນທີ່ທ່ານຈັບນັ້ນແລ"

ພໍໄດ້ຮູ້ເຊັ່ນນັ້ນ ພາມຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ບໍ່ມີຢາງອາຍ ທຸສີນ ມັກກ່າວຕົວະ ແຕ່ກໍປະຕິນຍາວ່າ ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ເວົ້າຈິງ ມີສີນ ມີກັນລະຍານະທຳ ພວກທ່ານບໍ່ມີຄວາມເປັນສະມະນະ ບໍ່ມີຄວາມເປັນພາມ ຄວາມເປັນສະມະນະຄວາມເປັນພາມຂອງພວກທ່ານເສື່ອມສິ້ນໄປແລ້ວ ພວກທ່ານຈະເປັນສະມະນະເປັນພາມໄດ້ແນວໃດ ພວກທ່ານປາສະຈາກຄວາມເປັນສະມະນະ ປາສະຈາກຄວາມເປັນພາມ ເປັນຫຍັງ ພຣະສະມະນະອຸທາຍີ ຈຶ່ງຈັບຕ້ອງອະໄວຍະວະນ້ອຍໃຫຍ່ຂອງພັນລະຍາເຮົາແນວນັ້ນນໍ ຕໍ່ໄປແມ່ຍິງຜູ້ມີຕະກູນ ລູກສາວຜູ້ມີຕະກູນ ຍິງຜູ້ມີຕະກູນ

ແມ່ຍິງສະໃພ້ຜູ້ມີຕະກູນ ສາວໃຊ້ປະຈຳຕະກູນຈະບໍ່ກ້າໄປອາຮາມ ຫຼື ວິຫານຢ່າງແນ່ນອນ ຍ້ອນຖ້າພວກນາງໄປກໍຈະຕ້ອງຖືກພຣະສະມະນະເຊື້ອສາຍສາກະຍະບຸດ ປະທຸດສະຮ້າຍເອົາ"

ພິກຂຸທັງຫຼາຍໄດ້ຍິນພານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອຸທາຍີຈຶ່ງຈັບຕ້ອງກາຍກັບມາຕຸຄາມນໍ" ເມື່ອພິກຂຸທັງຫຼາຍຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມພິກຂຸສົງຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຊົງສອບຖາມພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າທ່ານຈັບຕ້ອງກາຍກັບມາຕຸຄາມແມ່ນບໍ?" ພຣະອຸທາຍີຂາບທູນວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແນວນີ້ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ເປັນຫຍັງທ່ານຈຶ່ງຈັບຕ້ອງກາຍກັບມາຕຸຄາມນໍ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ຯລຯ ເຮົາບອກການລະງັບຄວາມກັດກຸ້ມຍ້ອນກາມໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນ ໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ຄຸນແຫ່ງການຜາຣົບຄວາມພຽນ ແລ້ວຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມກັບເລື້ອງນັ້ນແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໐] **ກໍ ພິກຂຸໃດຖືກຣາຄະຄອບງຳແລ້ວ ມີຈິດປັ່ນປ່ວນ ຈັບຕ້ອງກາຍມາຕຸຄາມ ຄື ຈັບມື ຈັບຜົມ ຫຼື ລູບຄຳອະໄວຍະວະສ່ວນໃດສ່ວນໜຶ່ງ ເປັນສັງຄາທິເສດ**

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໔໗໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຖືກຣາຄະຄອບງຳແລ້ວ ຄື ມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ຄຳວ່າ ປັ່ນປ່ວນ ຄວາມວ່າ ຈິດກຳໜັດແລ້ວຊື່ວ່າປັ່ນປ່ວນແດ່ ຈິດໂກດແລ້ວຊື່ວ່າປັ່ນປ່ວນແດ່ ຈິດຫຼົງແລ້ວຊື່ວ່າປັ່ນປ່ວນແດ່ ແຕ່ຈິດກຳໜັດແລ້ວ ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ປັ່ນປ່ວນ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ແມ່ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແມ່ຍິງມະນຸດນັ້ນໂດຍທີ່ສຸດແມ່ນແຕ່ເດັກຍິງເຊິ່ງເກີດໃນວັນນັ້ນ ແມ່ຍິງໃຫຍ່ກວ່ານີ້ບໍ່ຕ້ອງກ່າວເຖິງ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ຖືກຕ້ອງ ຄື ທ່ານກ່າວເຖິງຄວາມປະພຶດລ່ວງເກີນ

ທີ່ຊື່ວ່າ ມື ໝາຍເອົາຕັ້ງແຕ່ແຂນສອກເຖິງປາຍເລັບ

ທີ່ຊື່ວ່າ ຜົມ ໄດ້ແກ່ ເສັ້ນຜົມລ້ວນ ໆ ຫຼື ແຊມດ້ວຍດ້າຍ ແຊມດອກໄມ້ ແຊມເງິນ ແຊມຄຳ ແຊມແກ້ວມຸກດາ ຫຼື ແຊມແກ້ວມະນີ

ທີ່ຊື່ວ່າ ອະໄວຍະວະ ຄື ຍົກເວັ້ນມື ແລະ ຜົມ ນອກນັ້ນຊື່ວ່າອະໄວຍະວະ

## ບົດພາຊະນີ

## ມາຕິກາ

[໔໗໔] ຈັບຕ້ອງ ລູບຄຳ ລູບລົງ ລູບຂຶ້ນ ຈັບກົດລົງ ຈັບໃຫ້ເງີຍຂຶ້ນ ດຶງມາ ຍູ້ອອກ ນວດ ບີບ ຈັບ ຕ້ອງ

ທີ່ຊື່ວ່າ ຈັບຕ້ອງ ຄື ກິຣິຍາພຽງແຕ່ລູບຄຳ

ທີ່ຊື່ວ່າ ລູບຄຳ ຄື ລູບຄຳໄປທາງນັ້ນທາງນີ້

ທີ່ຊື່ວ່າ ລູບລົງ ຄື ລູບລົງເບື້ອງລຸ່ມ

ທີ່ຊື່ວ່າ ລູບຂຶ້ນ ຄື ລູບຂຶ້ນເບື້ອງເທິງ

ທີ່ຊື່ວ່າ ຈັບກົດລົງ ຄື ຈັບຂຽງລົງຂ້າງລຸ່ມ

ທີ່ຊື່ວ່າ ຈັບໃຫ້ເງີຍຂຶ້ນ ຄື ຈັບໃຫ້ເງີຍຂຶ້ນຂ້າງເທິງ

ທີ່ຊື່ວ່າ ດຶງມາ ຄື ດຶງມາຫາຕົນ

ທີ່ຊື່ວ່າ ຍູ້ອອກ ຄື ຍູ້ອອກຈາກຕົນ

ທີ່ຊື່ວ່າ ນວດ ຄື ຈັບອະໄວຍະວະແລ້ວບີບນວດ

ທີ່ຊື່ວ່າ ບີບ ຄື ບີບຣັດກັບຜ້າ ຫຼື ອາພອນບາງຢ່າງ

ທີ່ຊື່ວ່າ ຈັບ ຄື ລັກສະນະພຽງແຕ່ຈັບ

ທີ່ຊື່ວ່າ ຕ້ອງ ຄື ລັກສະນະພຽງແຕ່ສຳຜັດ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ດຶງເຂົ້າຫາອາບັດເກົ່າ ໃຫ້ມານັດແລະຮຽກເຂົ້າໝູ່ ຄະນະກໍເຮັດບໍ່ໄດ້ ພິກຂຸອົງດຽວກໍເຮັດບໍ່ໄດ້ ດັ່ງນັ້ນຈຶ່ງຕັດວ່າ ເປັນສັງຄາທິເສດ

ຄຳວ່າ "ເປັນສັງຄາທິເສດ" ນີ້ ເປັນການຂະໜານນາມ ເປັນຊື່ຂອງໝວດອາບັດນັ້ນ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ເປັນສັງຄາທິເສດ"

## ພິກຂຸເປີຍຍາລະ
## ແມ່ຍິງ

[໔໗໓] (໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ລູບລົງ ລູບຂຶ້ນ ຈັບກົດລົງ ຈັບໃຫ້ເງີຍຂຶ້ນ ດຶງມາ ຍູ້ອອກ ນວດ ບີບ ຈັບ ຕ້ອງກາຍຂອງແມ່ຍິງ ຕ້ອງອາບັດສັງຄາທິເສດ

(໑) ເປັນແມ່ຍິງ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນບັນເດາະ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນຊາຍແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ

## ບັນເດາະ

(໑) ເປັນບັນເດາະ (໒) ພິກຂຸສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງບັນເດາະ ຕ້ອງອາບັດຖຸນລັດໄຈ

(໑) ເປັນບັນເດາະ (໒) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງບັນເດາະ ຕ້ອງອາບັດທຸກກົດ

(໑) ເປັນບັນເດາະ (໒) ພິກຂຸສຳຄັນວ່າເປັນຊາຍ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງບັນເດາະ ຕ້ອງອາບັດທຸກກົດ

(໑) ເປັນບັນເດາະ (໒) ພິກຂຸສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງບັນເດາະ ຕ້ອງອາບັດທຸກກົດ

(໑) ເປັນບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງບັນເດາະ ຕ້ອງອາບັດທຸກກົດ

## ຊາຍ

(໑) ເປັນຊາຍ (໒) ພິກຂຸສຳຄັນວ່າເປັນຊາຍ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງຊາຍ ຕ້ອງອາບັດທຸກກົດ

(໑) ເປັນຊາຍ (໒) ພິກຂຸບໍ່ແນ່ໃຈວ່າເປັນຊາຍ ແລະ ມີຄວາມກຳໜັດ (໓) ພິກຂຸ ໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງຊາຍ ຕ້ອງອາບັດທຸກກົດ

(໑) ເປັນຊາຍ (໒) ພິກຂຸສຳຄັນວ່າເປັນສັດເດຍຣັດສານ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງຊາຍ ຕ້ອງອາບັດທຸກກົດ

(໑) ເປັນຊາຍ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງຊາຍ ຕ້ອງອາບັດທຸກກົດ

(໑) ເປັນຊາຍ (໒) ພິກຂຸສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງຊາຍ ຕ້ອງອາບັດທຸກກົດ

## ສັດເດຍຣັດສານ

(໑) ເປັນສັດເດຍຣັດສານ (໒) ພິກຂຸສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງສັດເດຍຣັດສານ ຕ້ອງອາບັດທຸກກົດ

(໑) ເປັນສັດເດຍຣັດສານ (໒) ພິກຂຸບໍ່ແນ່ໃຈວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງສັດເດຍຣັດສານ ຕ້ອງ ອາບັດທຸກກົດ

(໑) ເປັນສັດເດຍຣັດສານ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງສັດເດຍຣັດສານ ຕ້ອງອາບັດທຸກກົດ

(໑) ເປັນສັດເດຍຣັດສານ (໒) ພິກຂຸສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງສັດເດຍຣັດສານ ຕ້ອງອາບັດທຸກກົດ

(໑) ເປັນສັດເດຍຣັດສານ (໒) ພິກຂຸສຳຄັນວ່າເປັນຊາຍ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງສັດເດຍຣັດສານ ຕ້ອງອາບັດທຸກກົດ

### ເອກະມູລະກະໄນ ຈົບ

## ແມ່ຍິງ ໒ ຄົນ

[໔໗໔] (໑) ເປັນແມ່ຍິງ ໒ ຄົນ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນແລະມີຄວາມກຳ ໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໆລໆ ຈັບ ຕ້ອງກາຍຂອງແມ່ຍິງທັງ ໒ ຄົນ ຕ້ອງອາບັດສັງຄາທິເສດ ໒ ຕົວ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງແມ່ຍິງທັງ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນ ຯລຯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນ ຯລຯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງແມ່ຍິງທັງ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ

## ບັນເດາະ ໔ ຄົນ

(໑) ເປັນບັນເດາະ ໔ ຄົນ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງບັນເດາະ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ

(໑) ເປັນບັນເດາະ ໔ ຄົນ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະທັງ ໔ ຄົນ ຯລຯ

(໑) ເປັນບັນເດາະ ໔ ຄົນ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນ ຯລຯ

(໑) ເປັນບັນເດາະ ໔ ຄົນ (໔) ສຳຄັນວ່າເປັນສັດເດຍຣັດສານທັງ ໔ ຄົນ ຯລຯ

(໑) ເປັນບັນເດາະ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງບັນເດາະທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ

## ຊາຍ ໔ ຄົນ

(໑) ເປັນຊາຍ ໔ ຄົນ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນ ແລະ ມີຄວາມກຳໜັດແຮງ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງກາຍຂອງຊາຍທັງ ໔ ຄົນ ຕ້ອງ ອາບັດທຸກກົດ ໔ ຕົວ

(໑) ເປັນຊາຍ ໔ ຄົນ (໔) ພິກຂຸບໍ່ແນ່ໃຈວ່າເປັນຊາຍທັງ ໔ ຄົນ ຯລຯ

(໑) ເປັນຊາຍ ໔ ຄົນ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຄົນ ຯລຯ

(໑) ເປັນຊາຍ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ຯລຯ

(໑) ເປັນຊາຍ ໔ ຄົນ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງຊາຍທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ

## ສັດເດຍຣັດສານ ໔ ຕົວ

(໑) ເປັນສັດເດຍຣັດສານ ໔ ຕົວ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຕົວ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງກາຍຂອງສັດເດຍຣັດສານທັງ ໔ ຕົວ ຕ້ອງອາບັດທຸກກົດ ໔ ຕົວ

(໑) ເປັນສັດເດຍຣັດສານ ໔ ຕົວ (໔) ພິກຂຸບໍ່ແນ່ໃຈວ່າເປັນສັດເດຍຣັດສານທັງ ໔ ຕົວ ຯລຯ

(໑) ເປັນສັດເດຍຣັດສານ ໔ ຕົວ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຕົວ ຯລຯ

(໑) ເປັນສັດເດຍຣັດສານ ໔ ຕົວ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຕົວ ຯລຯ

(໑) ເປັນສັດເດຍຣັດສານ ໔ ຕົວ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຕົວແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງສັດເດຍຣັດສານທັງ ໔ ຕົວ ຕ້ອງອາບັດທຸກກົດ ໔ ຕົວ

## ແມ່ຍິງແລະບັນເດາະ

[໔໗໕] (໑) ເປັນແມ່ຍິງແລະບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

(໑) ເປັນແມ່ຍິງແລະບັນເດາະ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງແລະບັນເດາະ ທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງແລະບັນເດາະ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດຖຸນລັດໄຈ ໔ ຕົວ

(໑) ເປັນແມ່ຍິງແລະບັນເດາະ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງແລະບັນເດາະ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

## ແມ່ຍິງແລະຊາຍ

(໑) ເປັນແມ່ຍິງແລະຊາຍ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບ ຕ້ອງກາຍຂອງຄົນທັງ ໔ ຄົນ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

(໑) ເປັນແມ່ຍິງແລະຊາຍ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງແລະຊາຍທັງ ໔ ຄົນແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງແລະຊາຍ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງແລະຊາຍ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດ ກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງແລະຊາຍ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບ ຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

## ແມ່ຍິງແລະສັດເດຍຣັດສານ

(໑) ເປັນແມ່ຍິງແລະສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບ ຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

(໑) ເປັນແມ່ຍິງແລະສັດເດຍຣັດສານ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ສັດເດຍຣັດສານທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບ ຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ໗ລ໗ ຈັບຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງລູບຄຳ ຯລຯ ຈັບຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໃຈ

## ບັນເດາະແລະຊາຍ

(໑) ເປັນບັນເດາະແລະຊາຍ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນແລະມີຄວາມກຳ ໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງກາຍຂອງຄົນທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໃຈ

(໑) ເປັນບັນເດາະແລະຊາຍ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະແລະຊາຍທັງ ໔ ຄົນ ຯລຯ ຕ້ອງອາບັດທຸກກົດ ໔ ຕົວ

(໑) ເປັນບັນເດາະແລະຊາຍ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນ ຯລຯ

(໑) ເປັນບັນເດາະແລະຊາຍ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຄົນ ຯລຯ

(໑) ເປັນບັນເດາະແລະຊາຍ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ

## ບັນເດາະແລະສັດເດຍຣັດສານ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດກັບອາບັດຖຸນລັດໃຈ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ແລະ ສັດເດຍຣັດສານທັງ ໔ ຯລຯ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຯລຯ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຯລຯ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດ ໔ ຕົວ

## ຊາຍແລະສັດເດຍຣັດສານ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດ ໔ ຕົວ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸບໍ່ແນ່ໃຈວ່າເປັນຊາຍ ແລະ ສັດເດຍຣັດສານທັງ ໔ ฯລฯ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ฯລฯ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ฯລฯ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບຕ້ອງກາຍຂອງທັງ ໔ ຕ້ອງອາບັດທຸກກົດ ໔ ຕົວ

### ທຸມູລະກະໄນ ຈົບ

## ຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ

[໔໗໖] (໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ ฯລฯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງທັງ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ ฯລฯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງທັງ ໔ ຄົນ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ ฯລฯ

## ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍຂອງແມ່ຍິງ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ ฯລฯ

(໑) ເປັນແມ່ຍິງ ໒ ຄົນ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງແມ່ຍິງທັງ ໒ ຕ້ອງອາບັດຖຸນລັດໄຈ ໒ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງກາຍຂອງທັງ ໒ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ ຯລຯ

## ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ ຕ້ອງອາບັດທຸກກົດ ຯລຯ

(໑) ເປັນແມ່ຍິງ ໒ ຄົນ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ຯລຯ ຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງທັງ ໒ ຕ້ອງອາບັດທຸກກົດ ໒ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ຯລຯ ຈັບ ຕ້ອງຂອງທີ່ເນື່ອງດ້ວຍກາຍຂອງທັງ ໒ ຕ້ອງອາບັດທຸກກົດ ໒ ຕົວ ຯລຯ

## ຂອງທີ່ໂຍນໄປຖືກຕ້ອງກາຍຂອງແມ່ຍິງ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງກາຍຂອງແມ່ຍິງ ຕ້ອງອາບັດທຸກກົດ ຯລຯ

(໑) ເປັນແມ່ຍິງ ໒ ຄົນ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງກາຍຂອງແມ່ຍິງທັງ ໒ ຄົນ ຕ້ອງອາບັດທຸກກົດ ໒ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງກາຍຂອງຄົນທັງ ໒ ຕ້ອງອາບັດທຸກກົດ ໒ ຕົວ ຯລຯ

## ຂອງທີ່ໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ ຕ້ອງອາບັດທຸກກົດ ຯລຯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍຂອງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍຂອງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາຂອງແມ່ຍິງ ຕ້ອງອາບັດທຸກກົດ ຯລຯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາຂອງແມ່ຍິງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

(໑) ເປັນແມ່ຍິງ ແລະບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາຂອງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

**ພິກຂຸເປີຍຍາລະ ຈົບ**

## ອິດຖີເປີຍຍາລະ

## ແມ່ຍິງຈັບຕ້ອງກາຍຂອງພິກຂຸ

[໔໗໗] (໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ກາຍຈັບຕ້ອງ ລູບຄຳ ລູບລົງ ລູບຂຶ້ນ ຈັບກົດລົງ ຈັບໃຫ້ເງີຍຂຶ້ນ ດຶງມາ ຍູ້ອອກ ນວດ ບີບ ຈັບ ຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດສັງຄາທິເສດ ຯລຯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ແມ່ຍິງທັງ ໔ ໃຊ້ກາຍຈັບຕ້ອງ ລູບຄຳ ລູບລົງ ລູບຂຶ້ນ ຈັບກົດລົງ ຈັບໃຫ້ເງີຍຂຶ້ນ ດຶງມາ ຍູ້ອອກ ນວດ ບີບ ຈັບ ຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດສັງຄາທິເສດ ໔ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໔ ໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງທຸກກົດກັບອາບັດສັງຄາທິເສດ ฯລฯ

## ແມ່ຍິງຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດຖຸນລັດໄຈ ฯລฯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ແມ່ຍິງທັງ ໔ ໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດຖຸນລັດໄຈ ໔ ຕົວ ฯລฯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໔ ຄົນໃຊ້ກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດກັບອາບັດຖຸນລັດໄຈ ฯລฯ

## ແມ່ຍິງໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍຂອງພິກຂຸ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດຖຸນລັດໄຈ ฯລฯ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ແມ່ຍິງທັງ ໔ ຄົນໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດຖຸນລັດໄຈ ໔ ຕົວ ฯລฯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໔ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ฯລฯ ຈັບ ຕ້ອງກາຍ

ຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ກັບອາບັດຖຸນລັດໄຈ ។ລ។

[໒໗໙] (໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ។ລ។ ຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ។ລ។

(໑) ເປັນແມ່ຍິງ ໒ ຄົນ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະ ມີຄວາມກຳໜັດ (໓) ແມ່ຍິງທັງ ໒ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ។ລ។ ຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໒ ຕົວ ។ລ។

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໒ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງ ລູບຄຳ ។ລ។ ຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໒ ຕົວ ។ລ។

## ແມ່ຍິງໃຊ້ຂອງທີ່ໂຍນຖືກຕ້ອງກາຍຂອງພິກຂຸ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ຂອງໂຍນມາຈັບຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ។ລ។

(໑) ເປັນແມ່ຍິງ ໒ ຄົນ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ແມ່ຍິງທັງ ໒ ໃຊ້ຂອງໂຍນມາຈັບຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໒ ຕົວ ។ລ។

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໒ ໃຊ້ຂອງໂຍນມາຈັບຕ້ອງກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໒ ຕົວ ។ລ។

## ແມ່ຍິງໃຊ້ຂອງທີ່ໂຍນຖືກຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ

(໑) ເປັນແມ່ຍິງ (໒) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ຂອງໂຍນມາຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ។ລ។

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ທັງ ໔ ເອົາຂອງໂຍນມາຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໔ ຕົວ ๆລๆ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໔ ເອົາຂອງໂຍນມາຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຂອງພິກຂຸ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໔ ຕົວ ๆລๆ

## ແມ່ຍິງໃຊ້ຂອງທີ່ໂຍນຖືກຕ້ອງຂອງທີ່ໂຍນຂອງພິກຂຸ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ແມ່ຍິງໃຊ້ຂອງໂຍນມາຈັບຕ້ອງຂອງທີ່ພິກຂຸໂຍນໄປ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ແຕ່ບໍ່ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ๆລๆ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໔ ໃຊ້ຂອງໂຍນມາຈັບຕ້ອງຂອງທີ່ພິກຂຸໂຍນໄປ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ແຕ່ບໍ່ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໔ ຕົວ ๆລๆ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ທັງ ໔ ໃຊ້ຂອງໂຍນມາຈັບຕ້ອງຂອງທີ່ພິກຂຸໂຍນໄປ ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ແຕ່ບໍ່ຮັບຮູ້ສຳຜັດ ຕ້ອງອາບັດທຸກກົດ ໔ ຕົວ ๆລๆ

## ອິດຖີເປີຍຍາລະ ຈົບ

[໔໗໙] ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ຕ້ອງອາບັດສັງຄາທິເສດ

ພິກຂຸມີຄວາມປະສົງຈະເສບ ພະຍາຍາມດ້ວຍກາຍ ແຕ່ບໍ່ຮັບຮູ້ສຳຜັດຕ້ອງອາບັດທຸກກົດ
ພິກຂຸມີຄວາມປະສົງຈະເສບ ແຕ່ບໍ່ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ບໍ່ຕ້ອງອາບັດ
ພິກຂຸມີຄວາມປະສົງຈະເສບ ບໍ່ພະຍາຍາມດ້ວຍກາຍ ແລະບໍ່ຮັບຮູ້ສຳຜັດ ບໍ່ຕ້ອງອາບັດ
ພິກຂຸມີຄວາມປະສົງຈະໃຫ້ພົ້ນ ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ບໍ່ຕ້ອງອາບັດ
ພິກຂຸມີຄວາມປະສົງຈະໃຫ້ພົ້ນ ພະຍາຍາມດ້ວຍກາຍ ແຕ່ບໍ່ຮັບຮູ້ສຳຜັດ ບໍ່ຕ້ອງອາບັດ
ພິກຂຸມີຄວາມປະສົງຈະໃຫ້ພົ້ນ ແຕ່ບໍ່ພະຍາຍາມດ້ວຍກາຍ ຮັບຮູ້ສຳຜັດ ບໍ່ຕ້ອງອາບັດ
ພິກຂຸມີຄວາມປະສົງຈະໃຫ້ພົ້ນ ບໍ່ພະຍາຍາມດ້ວຍກາຍແລະບໍ່ຮັບຮູ້ສຳຜັດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໐] ໑. ພິກຂຸບໍ່ຈິງໃຈ

໒. ພິກຂຸຈັບຕ້ອງຍ້ອນບໍ່ມີສະຕິ

໓. ພິກຂຸບໍ່ຮູ້

໔. ພິກຂຸບໍ່ຍິນດີ

໕. ພິກຂຸວິກົນຈະລິດ

໖. ພິກຂຸມີຈິດຟຸ້ງຊ່ານ

໗. ພິກຂຸກະສັບກະສ່າຍຍ້ອນເວທະນາ

໘. ພິກຂຸຕົ້ນບັນຍັດ

## ຄາຖາລວມວິນີຕະວັດຖຸ
## ເລື້ອງທີ່ຊົງວິນິດໄສແລ້ວ

| | | | |
|---|---|---|---|
| ເລື້ອງມານດາ | ໑ ເລື້ອງ | ເລື້ອງທິດາ | ໑ ເລື້ອງ |
| ເລື້ອງນ້ອງສາວ | ໑ ເລື້ອງ | ເລື້ອງອະດີດພັນລະຍາ | ໑ ເລື້ອງ |
| ເລື້ອງນາງຍັກ | ໑ ເລື້ອງ | ເລື້ອງບັນເດາະ | ໑ ເລື້ອງ |
| ເລື້ອງແມ່ຍິງນອນຫຼັບ | ໑ ເລື້ອງ | ເລື້ອງແມ່ຍິງທີ່ຕາຍແລ້ວ | ໑ ເລື້ອງ |
| ເລື້ອງສັດເດຍຣັດສານໂຕແມ່ | ໑ ເລື້ອງ | ເລື້ອງຕຸ໊ກກະຕາໄມ້ | ໑ ເລື້ອງ |
| ເລື້ອງແມ່ຍິງຮ່ວມກັນຈັບ | ໑ ເລື້ອງ | ເລື້ອງຂົວ | ໑ ເລື້ອງ |
| ເລື້ອງຫົນທາງ | ໑ ເລື້ອງ | ເລື້ອງຕົ້ນໄມ້ | ໑ ເລື້ອງ |
| ເລື້ອງເຮືອ | ໑ ເລື້ອງ | ເລື້ອງເຊືອກ | ໑ ເລື້ອງ |
| ເລື້ອງທ່ອນໄມ້ | ໑ ເລື້ອງ | ເລື້ອງໃຊ້ບາດຍູ້ | ໑ ເລື້ອງ |
| ເລື້ອງໄຫວ້ | ໑ ເລື້ອງ | ເລື້ອງພະຍາຍາມແຕ່ບໍ່ໄດ້ຈັບຕ້ອງ | ໑ ເລື້ອງ |

## ວິນີຕະວັດຖຸ
## ເລື້ອງມານດາ ໑ ເລື້ອງ

[໔໗໑] ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງມານດາດ້ວຍຄວາມຮັກດັ່ງແມ່ລູກ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑)

## ເລື້ອງທິດາ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງທິດາດ້ວຍຄວາມຮັກດັ່ງພໍ່ລູກ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໒)

## ເລື້ອງນ້ອງສາວ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງນ້ອງສາວດ້ວຍຄວາມຮັກດັ່ງນ້ອງສາວ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໓)

## ເລື້ອງອະດີດພັນລະຍາ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບອະດີດພັນລະຍາ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໔)

## ເລື້ອງນາງຍັກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບນາງຍັກ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໕)

## ເລື້ອງບັນເດາະ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບບັນເດາະ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໖)

## ເລື້ອງແມ່ຍິງນອນຫຼັບ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບແມ່ຍິງນອນຫຼັບ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໗)

## ເລື້ອງແມ່ຍິງທີ່ຕາຍແລ້ວ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບແມ່ຍິງທີ່ຕາຍແລ້ວ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗)

## ເລື້ອງສັດເດຍຣັດສານໂຕແມ່ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບສັດເດຍຣັດສານໂຕແມ່ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໘)

## ເລື້ອງຕຸ໊ກກະຕາໄມ້ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງຈັບຕ້ອງກາຍກັບຕຸ໊ກກະຕາໄມ້ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໐)

## ເລື້ອງແມ່ຍິງຮ່ວມກັນຈັບ ໑ ເລື້ອງ

[໔໗໔] ສະໄໝນັ້ນ ແມ່ຍິງຈຳນວນຫຼາຍຈັບແຂນຕໍ່ ໆ ກັນໂອບພິກຂຸອົງໜຶ່ງພາໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ທ່ານຍິນດີບໍ?" "ບໍ່ຍິນດີ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຍິນດີ ບໍ່ຕ້ອງອາບັດ" (ເລື້ອງທີ ໑໑)

## ເລື້ອງຂົວ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ຈຶ່ງສັ່ນໄມ້ທີ່ແມ່ຍິງຍ່າງຂຶ້ນໄປ ທ່ານເກີດຄວາມກັງ ວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ  ໑໔)

## ເລື້ອງຫີນທາງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງພົບແມ່ຍິງຍ່າງສວນທາງມາ ມີຄວາມກຳໜັດຈຶ່ງຍ່າງຊຸນບ່າ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໑໓)

## ເລື້ອງຕົ້ນໄມ້ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ຈຶ່ງສັ່ນຕົ້ນໄມ້ທີ່ແມ່ຍິງຂຶ້ນໄປ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໔)

## ເລື້ອງເຮືອ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ຈຶ່ງສັ່ນເຮືອທີ່ແມ່ຍິງນັ່ງ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໕)

## ເລື້ອງເຊືອກ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ຈຶ່ງດຶງເຊືອກທີ່ແມ່ຍິງຈັບໄວ້ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໖)

## ເລື້ອງທ່ອນໄມ້ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ຈຶ່ງດຶງທ່ອນໄມ້ທີ່ແມ່ຍິງຖືໄວ້ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໗)

## ເລື້ອງໃຊ້ບາດຍູ້ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກໍາໜັດ ໃຊ້ບາດຍູ້ແມ່ຍິງ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໑໙)

## ເລື້ອງໄຫວ້ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກໍາໜັດ ຍົກຕີນຖືກແມ່ຍິງຜູ້ກໍາລັງໄຫວ້ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໑໙)

## ເລື້ອງພະຍາຍາມແຕ່ບໍ່ໄດ້ຈັບຕ້ອງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງພະຍາຍາມຈະຈັບແມ່ຍິງແຕ່ບໍ່ໄດ້ຖືກຕົວ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໔໐)

**ກາຍະສັງສັກຄະສິກຂາບົດທີ ໔ ຈົບ**

# ໙. ທຸດຖຸນລະວາຈາສິກຂາບົດ

## ວ່າດ້ວຍການເວົ້າກ້ຽວແມ່ຍິງ

### ເລື້ອງພຣະອຸທາຍີ

[໘໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະອຸທາຍີຢູ່ໃນປ່າ ວິຫານຂອງທ່ານສວຍງາມ ໜ້າເບິ່ງ ໜ້າຊົມ ແມ່ຍິງຈຳນວນຫຼາຍພາກັນໄປວັດເພື່ອຊົມວິຫານ ພາກັນເຂົ້າໄປຫາພຣະອຸທາຍີເຖິງທີ່ຢູ່ ເມື່ອເຂົ້າໄປຫາແລ້ວ ກ່າວວ່າ "ພວກຂ້ານ້ອຍຕ້ອງການຊົມວິຫານຂອງຄູບາ ຂ້ານ້ອຍ"

ພຣະອຸທາຍີພາແມ່ຍິງເຫຼົ່ານັ້ນຊົມວິຫານ ເວົ້າຊົມແດ່ ເວົ້າຕິແດ່ ຂໍແດ່ ອ້ອນວອນແດ່ ຖາມແດ່ ຖາມຊ້ຳແດ່ ບອກແດ່ ສອນແດ່ ດ່າແດ່ ພາດພິງທະວານໜັກ ທະວານເບົາຂອງແມ່ຍິງເຫຼົ່ານັ້ນ

ພວກແມ່ຍິງທີ່ບໍ່ຢ້ານບາບ ໃຈເຖິງ ບໍ່ມີຢາງອາຍ ບາງຄົນຍິ້ມ ບາງຄົນກໍເວົ້າຍົວະ ບາງຄົນກໍເວົ້າຫວານໃສ່ ບາງຄົນກໍໃຫ້ທ່າກັບພຣະອຸທາຍີ ສ່ວນພວກແມ່ຍິງທີ່ມີຄວາມລະອາຍໃຈ ກໍຫຼີກອອກໄປແລ້ວຟ້ອງພິກຂຸທັງຫຼາຍວ່າ "ທ່ານຂ້ານ້ອຍ ຄຳເຊັ່ນນີ້ບໍ່ເໝາະ ບໍ່ຄວນ ແມ່ນວ່າເປັນສາມີເຮົາເວົ້າເຊັ່ນນີ້ພວກເຮົາກໍຍັງບໍ່ມັກ ແຕ່ນີ້ພຣະອຸທາຍີມາເວົ້າໄດ້ແນວໃດ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອຸທາຍີ ຈຶ່ງເວົ້າກ້ຽວມາຕຸຄາມ ດ້ວຍວາຈາຊົ່ວຫຍາບແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບແມ່ນບໍ?" ທ່ານທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແນວນີ້ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ເປັນຫຍັງທ່ານຈຶ່ງເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບແນວນັ້ນນໍ ໂມຄະບຸຣຸດ ເຮົາສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍຄວາມກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ໗ລ໗ ເຮົາບອກ

ການລະງັບຄວາມກັດກຸ້ມຍ້ອນການໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ໂມຄະບຸຣຸດ ການກະທຳແບວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ฯລฯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

**[໔໗໔] ກໍ ພິກຂຸໃດຖືກຣາຄະຄອບງຳແລ້ວ ມີຈິດປັ່ນປ່ວນ ເວົ້າກ້ຽວມາຕຸຄາມ ດ້ວຍວາຈາຊົ່ວຫຍາບ ພາດພິງເມຖຸນ ເໝືອນຊາຍໜຸ່ມເວົ້າກ້ຽວແມ່ຍິງ ເປັນສັງຄາທິເສດ**

**ເລື້ອງພຣະອຸທາຍີ ຈົບ**

## ສິກຂາບົດວິພັງ

[໔໗໕] ຄຳວ່າ ກໍ ฯລฯ ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຖືກຣາຄະຄອບງຳແລ້ວ ຄື ມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ຄຳວ່າ ປັ່ນປ່ວນ ຄວາມວ່າ ຈິດກຳໜັດແລ້ວຊື່ວ່າປັ່ນປ່ວນແດ່ ຈິດໂກດແລ້ວຊື່ວ່າປັ່ນປ່ວນແດ່ ຈິດຫຼົງແລ້ວຊື່ວ່າປັ່ນປ່ວນແດ່ ຈິດກຳໜັດແລ້ວ ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ປັ່ນປ່ວນ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ແມ່ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແຕ່ເປັນແມ່ຍິງທີ່ຮູ້ດຽງສາ ສາມາດເຂົ້າໃຈຄຳເວົ້າສຸພາສິດ ທຸບພາສິດ ຄຳຫຍາບ ແລະຄຳສຸພາບ

ວາຈາທີ່ຊື່ວ່າ ຊົ່ວຫຍາບ ໄດ້ແກ່ ຄຳເວົ້າທີ່ພາດພິງເມຖຸນທຳທາງທະວານໜັກ ແລະທະວານເບົາ

ຄຳວ່າ ເວົ້າກ້ຽວ ນີ້ ທ່ານຮຽກຄວາມປະພຶດລ່ວງເກີນ

ຄຳວ່າ ເໝືອນຊາຍໜຸ່ມເວົ້າກ້ຽວແມ່ຍິງສາວ ໄດ້ແກ່ ໜຸ່ມເວົ້າກ້ຽວສາວ ຊາຍໄວລຸ້ນເວົ້າກ້ຽວແມ່ຍິງໄວລຸ້ນ ຄື ຊາຍຜູ້ບໍລິໂພກກາມເວົ້າກ້ຽວແມ່ຍິງຜູ້ບໍລິໂພກກາມ

ຄຳວ່າ ພາດພິງເມຖຸນ ໄດ້ແກ່ ຄຳເວົ້າກ່ຽວກັບເມຖຸນທຳ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນີ້ ສົງເທົ່ານັ້ນໃຫ້ປະຣິວາດ ฯລฯ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ເປັນສັງຄາທິເສດ"

# ບົດພາຊະນີ

## ມາຕິກາ

ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຂໍແດ່ ອ້ອນວອນແດ່ ຖາມແດ່ ຖາມຊ້ຳແດ່ ບອກແດ່ ສອນແດ່ ດ່າແດ່ ພາດພິງທະວານທັງສອງ

ທີ່ຊື່ວ່າ ເວົ້າຊົມ ຄື ເວົ້າຊົມເຊີຍ ພັນລະນາ ເວົ້າສັນເສີນທະວານທັງສອງ

ທີ່ຊື່ວ່າ ເວົ້າຕິ ຄື ເວົ້າຂົ່ມ ເວົ້າສຽດສີ ເວົ້າຕິຕຽນທະວານທັງສອງ

ທີ່ຊື່ວ່າ ຂໍ ຄື ເວົ້າວ່າ “ຈົ່ງໃຫ້ແກ່ເຮົາ ຄວນໃຫ້ແກ່ເຮົາ”

ທີ່ຊື່ວ່າ ອ້ອນວອນ ຄື ເວົ້າວ່າ “ເມື່ອໃດມານດາຂອງທ່ານຈັກເຫຼື້ອມໃສ ເມື່ອໃດບິດາຂອງທ່ານຈັກເຫຼື້ອມໃສ ເມື່ອໃດເທວະດາຂອງທ່ານຈັກເຫຼື້ອມໃສ ເມື່ອໃດທ່ານຈະມີຂະນະດີ ມີໄລຍະດີ ມີບຸດດີ ເມື່ອໃດເຮົາຈະໄດ້ເສບເມຖຸນທຳກັບທ່ານ”

ທີ່ຊື່ວ່າ ຖາມ ຄື ຖາມວ່າ “ທ່ານໃຫ້ແກ່ສາມີແນວໃດ ຫຼື ໃຫ້ແກ່ຊາຍຊູ້ແນວໃດ”

ທີ່ຊື່ວ່າ ຖາມຊ້ຳ ຄື ສອບຖາມວ່າ “ໄດ້ຂ່າວວ່າ ທ່ານໃຫ້ແກ່ສາມີແນວນີ້ ໃຫ້ແກ່ຊາຍຊູ້ແນວນີ້ບໍ”

ທີ່ຊື່ວ່າ ບອກ ຄື ພໍຖືກຖາມຈຶ່ງບອກວ່າ “ທ່ານຈົ່ງໃຫ້ແນວນີ້ ເມື່ອໃຫ້ແນວນີ້ ຈະເປັນທີ່ຮັກແພງພໍໃຈຂອງສາມີ”

ທີ່ຊື່ວ່າ ສອນ ຄື ເຂົາບໍ່ຖາມກໍສອນວ່າ “ທ່ານຈົ່ງໃຫ້ແນວນີ້ ເມື່ອໃຫ້ແນວນີ້ ຈະເປັນທີ່ຮັກແພງພໍໃຈຂອງສາມີ”

ທີ່ຊື່ວ່າ ດ່າ ຄື ດ່າວ່າ “ທ່ານບໍ່ມີເຄື່ອງໝາຍເພດ ທ່ານສັກແຕ່ວ່າມີເຄື່ອງໝາຍເພດ ທ່ານບໍ່ມີປະຈຳເດືອນ ທ່ານມີປະຈຳເດືອນບໍ່ຢຸດ ທ່ານໃຊ້ຜ້າຊັບສະເໝີ ທ່ານເປັນຄົນໄຫຼຊຶມ ທ່ານມີເດືອຍ ທ່ານເປັນບັນເດາະແມ່ຍິງ ທ່ານມີລັກສະນະຄ້າຍຊາຍ ທ່ານມີທະວານໜັກທະວານເບົາຕິດກັນ ທ່ານມີສອງເພດ”

## ແມ່ຍິງ

[໔໗໓] (໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຂໍແດ່ ອ້ອນວອນແດ່ ຖາມແດ່ ຖາມຊ້ຳແດ່ ບອກແດ່ ສອນແດ່ ດ່າແດ່ ພາດພິງທະວານໜັກທະວານເບົາຂອງແມ່ຍິງ ຕ້ອງອາບັດສັງຄາທິເສດ

(໑) ເປັນແມ່ຍິງ (໔) ພິກຂຸບໍ່ແນ່ໃຈແມ່ຍິງວ່າເປັນແມ່ຍິງ ฯລฯ ສຳຄັນວ່າເປັນບັນເດາະ ฯລฯ ສຳຄັນວ່າເປັນຊາຍ ฯລฯ ສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ฯລฯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ

## ບັນເດາະ

(໑) ເປັນບັນເດາະ (໔) ພິກຂຸສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລື ດ່າແດ່ ພາດພິງທະວານໜັກທະວານເບົາຂອງບັນເດາະ ຕ້ອງອາບັດຖຸນລັດໄຈ

(໑) ເປັນບັນເດາະ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ຫລື ສຳຄັນວ່າເປັນຊາຍ ຫລື ສຳຄັນວ່າເປັນສັດເດຍຣັດສານ ຫລື ສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລື ດ່າແດ່ ພາດພິງທະວານໜັກທະວານເບົາຂອງ ບັນເດາະ ຕ້ອງອາບັດທຸກກົດ

## ຊາຍ

(໑) ເປັນຊາຍ (໔) ພິກຂຸສຳຄັນວ່າເປັນຊາຍ ຫລື ບໍ່ແນ່ໃຈວ່າເປັນຊາຍ ຫລື ສຳຄັນວ່າເປັນສັດເດຍຣັດສານ ຫລື ສຳຄັນວ່າເປັນແມ່ຍິງ ຫລື ສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລື ດ່າແດ່ ພາດພິງທະວານໜັກ ທະວານເບົາຂອງຊາຍ ຕ້ອງອາບັດທຸກກົດ

## ສັດເດຍຣັດສານ

(໑) ເປັນສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານ ຫລື ບໍ່ແນ່ໃຈວ່າເປັນສັດເດຍຣັດສານ ຫລື ສຳຄັນວ່າເປັນແມ່ຍິງ ຫລື ສຳຄັນວ່າເປັນບັນເດາະ ຫລື ສຳຄັນວ່າເປັນຊາຍແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລື ດ່າແດ່ ພາດພິງທະວານໜັກທະວານເບົາຂອງສັດເດຍຣັດສານ ຕ້ອງອາບັດທຸກກົດ

## ແມ່ຍິງ ໒ ຄົນ

(໑) ເປັນແມ່ຍິງ ໒ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລື ດ່າແດ່ ພາດພິງທະວານໜັກທະວານເບົາຂອງແມ່ຍິງທັງ ໒ ຄົນ ຕ້ອງອາບັດສັງຄາທິເສດ ໒ ຕົວ

(໑) ເປັນແມ່ຍິງ ໒ ຄົນ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງທັງ ໒ ຄົນ ຫລື ສຳຄັນວ່າເປັນບັນເດາະ ຫລື ສຳຄັນວ່າເປັນຊາຍ ຫລື ສຳຄັນວ່າເປັນສັດເດຍຣັດສານ ແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລື ດ່າແດ່ ພາດພິງທະວານໜັກທະວານເບົາຂອງແມ່ຍິງທັງ ໒ ຄົນ ຕ້ອງອາບັດຖຸນລັດໄຈ ໒ ຕົວ

## ບັນເດາະ ໔ ຄົນ

(໑) ເປັນບັນເດາະ ໔ ຄົນ (໒) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນ ແລະ ມີຄວາມກຳ ໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງບັນເດາະທັງ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ

(໑) ເປັນບັນເດາະ ໔ ຄົນ (໒) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະທັງ ໔ ຄົນ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ຯລຯ ສຳຄັນວ່າເປັນແມ່ຍິງແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງບັນເດາະທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ

## ຊາຍ ໔ ຄົນ

(໑) ເປັນຊາຍ ໔ ຄົນ (໒) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນ ຯລຯ ບໍ່ແນ່ໃຈວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ຯລຯ ສຳຄັນວ່າເປັນແມ່ຍິງ ຯລຯ ສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງຊາຍທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ

## ສັດເດຍຣັດສານ ໔ ຕົວ

(໑) ເປັນສັດເດຍຣັດສານ ໔ ຕົວ (໒) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຕົວ ຯລຯ ບໍ່ແນ່ໃຈວ່າເປັນສັດເດຍຣັດສານ ຯລຯ ສຳຄັນວ່າເປັນແມ່ຍິງ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ສຳຄັນວ່າເປັນຊາຍ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງສັດເດຍຣັດສານທັງ ໔ ຕົວ ຕ້ອງອາບັດທຸກກົດ ໔ ຕົວ

## ແມ່ຍິງ ແລະ ບັນເດາະ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໔ ຄົນ ຕ້ອງອາບັດທຸກກົດກັບສັງຄາທິເສດ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ບັນເດາະ ທັງ ໔ ຄົນ ຯລຯ ຕ້ອງອາບັດທຸກກົດກັບຖຸນລັດໄຈ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ຕ້ອງອາບັດຖຸນລັດໄຈ ໔ ຕົວ ຯລຯ ສຳຄັນວ່າເປັນຊາຍ ຯລຯ ຕ້ອງອາບັດທຸກກົດກັບຖຸນລັດໄຈ ຯລຯ

ສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໒ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ

## ແມ່ຍິງ ແລະ ຊາຍ

(໑) ເປັນແມ່ຍິງແລະຊາຍ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໒ ຄົນ ຕ້ອງອາບັດທຸກກົດກັບສັງຄາທິເສດ

(໑) ເປັນແມ່ຍິງແລະຊາຍ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງແລະຊາຍທັງ ໒ ຄົນ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກ ທະວານເບົາຂອງທັງ ໒ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ

## ແມ່ຍິງ ແລະ ສັດເດຍຣັດສານ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໒ ຄົນ ຕ້ອງອາບັດທຸກກົດກັບສັງຄາທິເສດ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ສັດເດຍຣັດສານ ທັງ ໒ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງ ທະວານໜັກທະວານເບົາຂອງທັງ ໒ ຕ້ອງອາບັດທຸກກົດກັບຖຸນລັດໄຈ

## ບັນເດາະ ແລະ ຊາຍ

(໑) ເປັນບັນເດາະ ແລະ ຊາຍ (໒) ພິກຂຸສຳຄັນວ່າເປັນບັນເດາະທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໒ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ

(໑) ເປັນບັນເດາະ ແລະຊາຍ (໒) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ແລະ ຊາຍທັງ ໒ ຄົນ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ຯລຯ ສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໒ ຄົນ ຕ້ອງອາບັດທຸກກົດ ໒ ຕົວ

## ບັນເດາະ ແລະ ສັດເດຍຣັດສານ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລຶ ດ່າແດ່ ພາດພິງທະວານໜັກ ທະວານເບົາຂອງທັງ ໔ ຕ້ອງອາບັດທຸກກົດກັບຖຸນລັດໄຈ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ແລະ ສັດເດຍຣັດສານທັງ ໔ ຫລຶ ສຳຄັນວ່າເປັນຊາຍ ຫລຶ ສຳຄັນວ່າເປັນສັດເດຍຣັດສານ ຫລຶ ສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລຶ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໔ ຕ້ອງອາບັດທຸກກົດ ໔ ຕົວ

## ຊາຍ ແລະ ສັດເດຍຣັດສານ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຫລຶ ບໍ່ແນ່ໃຈວ່າເປັນຊາຍ ແລະ ສັດເດຍຣັດສານທັງ ໔ ຫລຶ ສຳຄັນວ່າເປັນສັດເດຍຣັດສານ ຫລຶ ສຳຄັນວ່າເປັນແມ່ຍິງ ຫລຶ ສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລຶ ດ່າແດ່ ພາດພິງທະວານໜັກທະວານເບົາຂອງທັງ ໔ ຕ້ອງອາບັດທຸກກົດ ໔ ຕົວ

## ໃຕ້ບ່າ ແລະ ເໜືອເຂົ່າ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸ ເວົ້າຊົມແດ່ ເວົ້າຕິແດ່ ຫລຶ ດ່າແດ່ ພາດພິງເຖິງອະໄວຍະວະເບື້ອງເທິງໃຕ້ບ່າລົງມາ ອະໄວຍະວະເບື້ອງຕ່ຳເໜືອເຂົ່າຂຶ້ນໄປ ເວັ້ນທະວານໜັກ ແລະ ທະວານເບົາຂອງແມ່ຍິງ ຕ້ອງອາບັດຖຸນລັດໄຈ ຫລຶ

(໑) ເປັນສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ຫລຶ ຕ້ອງອາບັດທຸກກົດ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລຶ ດ່າແດ່ ພາດພິງເຖິງອະໄວຍະວະເບື້ອງເທິງໃຕ້ບ່າລົງມາ ອະໄວຍະວະເບື້ອງຕ່ຳເໜືອເຂົ່າຂຶ້ນໄປ ເວັ້ນທະວານໜັກ ແລະ ທະວານເບົາຂອງແມ່ຍິງທັງ ໔ ຕ້ອງອາບັດຖຸນລັດໄຈ ໔ ຕົວ ຫລຶ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຫລຶ ດ່າແດ່ ພາດພິງເຖິງອະໄວຍະວະເບື້ອງເທິງໃຕ້ບ່າລົງມາ ອະໄວຍະວະເບື້ອງຕ່ຳເໜືອເຂົ່າຂຶ້ນໄປ ເວັ້ນທະວານໜັກ ແລະ ທະວານເບົາຂອງທັງ ໔ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ ຫລຶ

## ເໜືອບ່າ ແລະ ໃຕ້ເຂົ່າ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງເຖິງອະໄວຍະວະເບື້ອງເທິງເໜືອບ່າຂຶ້ນໄປ ອະໄວຍະວະເບື້ອງຕ່ຳໃຕ້ເຂົ່າລົງມາຂອງແມ່ຍິງ ຕ້ອງອາບັດທຸກກົດ

(໑) ເປັນບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ຯລຯ (໑) ເປັນຊາຍ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ຯລຯ (໑) ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ຯລຯ ຕ້ອງອາບັດທຸກກົດ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງເຖິງອະໄວຍະວະເບື້ອງເທິງເໜືອບ່າຂຶ້ນໄປ ອະໄວຍະວະເບື້ອງຕ່ຳໃຕ້ເຂົ່າລົງມາຂອງແມ່ຍິງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງເຖິງອະໄວຍະວະເບື້ອງເທິງເໜືອບ່າຂຶ້ນໄປ ອະໄວຍະວະເບື້ອງຕ່ຳໃຕ້ເຂົ່າລົງມາຂອງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

## ເວົ້າພາດພິງເຖິງຂອງທີ່ເນື່ອງດ້ວຍກາຍ

(໑) ເປັນແມ່ຍິງ (໔) ພິກຂຸສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງເຖິງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງ ຕ້ອງອາບັດທຸກກົດ

(໑) ເປັນບັນເດາະ ຯລຯ (໑) ເປັນຊາຍ ຯລຯ (໑) ເປັນສັດເດຍຣັດສານ ຯລຯ ຕ້ອງອາບັດທຸກກົດ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງເຖິງຂອງທີ່ເນື່ອງດ້ວຍກາຍຂອງແມ່ຍິງທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

(໑) ເປັນແມ່ຍິງ ແລະ ບັນເດາະ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະມີຄວາມກຳໜັດ (໓) ພິກຂຸເວົ້າຊົມແດ່ ເວົ້າຕິແດ່ ຯລຯ ດ່າແດ່ ພາດພິງເຖິງຂອງທີ່ເນື່ອງດ້ວຍກາຍຂອງທັງ ໔ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໗] ໑. ພິກຂຸມຸ້ງອັດຖະ
໒. ພິກຂຸມຸ້ງທຳ
໓. ພິກຂຸມຸ້ງພໍ່າສອນ
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

## ຄາຖາລວມວິນີຕະວັດຖຸ

## ເລື້ອງທີ່ຊົງວິນິດໄສແລ້ວ

| | | | |
|---|---|---|---|
| ເລື້ອງຜ້າກຳພົນສີແດງ | ໑ ເລື້ອງ | ເລື້ອງຜ້າກຳພົນຂົນແຂງ | ໑ ເລື້ອງ |
| ເລື້ອງຜ້າກຳພົນຂົນຫຍຸ້ງ | ໑ ເລື້ອງ | ເລື້ອງຜ້າກຳພົນຂົນຫຍາບ | ໑ ເລື້ອງ |
| ເລື້ອງຜ້າຫົ່ມຂົນຍາວ | ໑ ເລື້ອງ | ເລື້ອງນາຫວ່ານ | ໑ ເລື້ອງ |
| ເລື້ອງຫົນທາງຮາບພຽງ | ໑ ເລື້ອງ | ເລື້ອງມີສັດທາ | ໑ ເລື້ອງ |
| ເລື້ອງໃຫ້ທານ | ໑ ເລື້ອງ | ເລື້ອງເຮັດວຽກ | ໓ ເລື້ອງ |

## ວິນີຕະວັດຖຸ

## ເລື້ອງຜ້າກຳພົນສີແດງ ໑ ເລື້ອງ

[໔໗໗] ສະໄໝນັ້ນ ແມ່ຍິງຄົນໜຶ່ງຄຸມຜ້າກຳພົນໃໝ່ສີແດງ ພິກຂຸອົງໜຶ່ງມີຄວາມກຳໜັດໄດ້ກ່າວກັບນາງວ່າ "ນ້ອງສາວ ທ່ານມີສີແດງແທ້" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ແມ່ນຂ້ານ້ອຍ ຄູບາ ຜ້າກຳພົນໃໝ່ສີແດງ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑)

## ເລື້ອງຜ້າກຳພົນຂົນແຂງ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຄຸມຜ້າກຳພົນຂົນແຂງ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ທ່ານມີຂົນແຂງແທ້" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ແມ່ນຂ້ານ້ອຍ ຄູບາ ຜ້າກຳພົນຂົນແຂງ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດ

ແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໔)

## ເລື້ອງຜ້າກຳພົນຂົນຫຍຸ້ງ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຄຸມຜ້າກຳພົນຊັກໃໝ່ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ທ່ານມີຂົນຫຍຸ້ງ" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ແມ່ນຂ້ານ້ອຍ ຄູບາ ຜ້າກຳພົນຂົນຫຍຸ້ງ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໕)

## ເລື້ອງຜ້າກຳພົນຂົນຫຍາບ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຄຸມຜ້າກຳພົນຂົນຫຍາບ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ທ່ານມີຂົນຫຍາບ" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ແມ່ນຂ້ານ້ອຍ ຄູບາ ຜ້າກຳພົນຂົນຫຍາບ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດ ສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໔)

## ເລື້ອງຜ້າຫົ່ມຂົນຍາວ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຄຸມຜ້າຫົ່ມຂົນຍາວ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ທ່ານມີຂົນຍາວ" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ແມ່ນຂ້ານ້ອຍ ຄູບາ ຜ້າຫົ່ມຂົນຍາວ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໕)

## ເລື້ອງຫວ່ານນາ ໑ ເລື້ອງ

[໔໗໙] ສະໄໝນັ້ນ ແມ່ຍິງຄົນໜຶ່ງວານນາແລ້ວຍ່າງມາ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ທ່ານຫວ່ານສຳເລັດແລ້ວບໍ?" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ແມ່ນຂ້ານ້ອຍ ຫວ່ານສຳເລັດແລ້ວແຕ່ຍັງບໍ່ໄດ້ໄຖປົກ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາ ທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໖)

## ເລື້ອງຫົນທາງຮາບພຽງ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງພົບນາງປະຣິພາຊິກາຍ່າງສວນທາງມາ ມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ທາງຂອງທ່ານຮາບພຽງຢູ່ບໍ?" ແຕ່ນາງບໍ່ເຂົ້າໃຈຄວາມໝາຍຈຶ່ງກ່າວວ່າ "ໂດຍຂ້ານ້ອຍ ນິມົນຄູ່ບາຍ່າງໄປເທີ້ນ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໗)

## ເລື້ອງມີສັດທາ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບແມ່ຍິງຄົນໜຶ່ງວ່າ "ນ້ອງສາວ ນາງເປັນຄົນມີສັດທາ ຈະຖວາຍສິ່ງທີ່ນາງໃຫ້ແກ່ສາມີແກ່ພວກອາດມາແດ່ບໍ່ໄດ້ບໍ?" "ແມ່ນອັນໃດຂ້ານ້ອຍ?" ພິກຂຸນັ້ນຕອບວ່າ"ເມຖຸນທຳ" ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໘)

## ເລື້ອງໃຫ້ທານ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບແມ່ຍິງຄົນໜຶ່ງວ່າ "ນ້ອງສາວ ທ່ານເປັນຄົນມີສັດທາ ຈະຖວາຍທານອັນເລີດແກ່ພວກອາດມາແດ່ບໍ່ໄດ້ບໍ?" "ແມ່ນອັນໃດ ຂ້ານ້ອຍ?" ພິກຂຸນັ້ນຕອບວ່າ "ເມຖຸນທຳ" ແລ້ວເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໙)

## ເລື້ອງເຮັດວຽກ ໓ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງກຳລັງເຮັດວຽກຢູ່ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ຢຸດເທີ້ນ ອາດຕະມາຈັກຊ່ອຍເຮັດ" ແຕ່ນາງບໍ່ຮູ້ຄວາມໝາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໐)

ສະໄໝນັ້ນ ແມ່ຍິງຄົນໜຶ່ງກຳລັງເຮັດວຽກຢູ່ ພິກຂຸອົງໜຶ່ງມີຄວາມກຳໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ນັ່ງເທີ້ນ ອາດຕະມາຈັກຊ່ອຍເຮັດ" ແຕ່ນາງບໍ່ຮູ້ຄວາມໝາຍ ທ່ານເກີດ

ຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໑)

ສະໄໝນັ້ນ ແມ່ຍິງຄົນໜຶ່ງກໍາລັງເຮັດວຽກຢູ່ ພິກຂຸອົງໜຶ່ງມີຄວາມກໍາໜັດ ໄດ້ກ່າວກັບນາງວ່າ "ນ້ອງສາວ ນອນພັກເທີ້ນ ອາດຕະມາຈັກຊ່ອຍເຮັດ" ແຕ່ນາງບໍ່ຮູ້ຄວາມໝາຍ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑໔)

### ທຸດຖຸນລະວາຈາສິກຂາບົດທີ ໓ ຈົບ

# ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ

## ວ່າດ້ວຍການໃຫ້ບໍາເລີຄວາມຕ້ອງການຂອງຕົນ

### ເລື້ອງພຣະອຸທາຍີ

[໔໙໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະອຸທາຍີເປັນພຣະທີ່ໃກ້ຊິດຕະກູນໃນນະຄອນສາວັດຖີ ໄປມາຫາສູ່ຕະກູນເປັນຈໍານວນຫຼາຍ ສະໄໝນັ້ນ ມີແມ່ໝ້າຍຜົວຕາຍຄົນໜຶ່ງ ຮູບງາມ ໜ້າເບິ່ງ ໜ້າຊົມ ເມື່ອເວລາເຊົ້າ ພຣະອຸທາຍີຄອງອັນຕະຣະວາສົກ ຖືບາດແລະຈີວອນຍ່າງໄປເຖິງເຮືອນແມ່ໝ້າຍນັ້ນ ເມື່ອເຖິງແລ້ວຈຶ່ງນັ່ງເທິງອາສະນະທີ່ເຂົາຈັດໄວ້ ເມື່ອແລ້ວແມ່ໝ້າຍຈຶ່ງເຂົ້າໄປຫາເຖິງທີ່ພຣະອຸທາຍີນັ່ງ ຂາບແລ້ວນັ່ງໃນທີ່ສົມຄວນ ເມື່ອແລ້ວທ່ານພຣະອຸທາຍີຊີ້ແຈ່ງໃຫ້ແມ່ໝ້າຍເຫັນຊັດແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທໍາມີກະຖາ ຄັ້ງນັ້ນ ແມ່ໝ້າຍໄດ້ກ່າວປະວາຣະນາ ພຣະອຸທາຍີວ່າ "ຄູບາ ໂຜດບອກເທີ້ນ ທ່ານຕ້ອງການສິ່ງໃດທີ່ຂ້ານ້ອຍສາມາດຈັດຖວາຍໄດ້ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະເພສັດບໍຣິຂານ"

"ປັດໄຈເຫຼົ່ານັ້ນຫາໄດ້ບໍ່ຍາກ ທ່ານຈົ່ງຖວາຍສິ່ງທີ່ຫາໄດ້ຍາກແກ່ອາດຕະມາເທີ້ນ"

"ອັນໃດນໍ? ຂ້ານ້ອຍ"

"ເມຖຸນທໍາ"

"ທ່ານຕ້ອງການແມ່ນບໍ? ຂ້ານ້ອຍ"

"ອາດຕະມາຕ້ອງການ"

ແມ່ໝ້າຍຈຶ່ງກ່າວວ່າ "ນິມົນທ່ານມາເທີ້ນ ຂ້ານ້ອຍ" ແລ້ວຍ່າງເຂົ້າຫ້ອງປິດຜ້ານຸ່ງແລ້ວນອນຫງາຍເທິງຕຽງ

ຂະນະນັ້ນ ພຣະອຸທາຍີຍ່າງຕາມນາງເຂົ້າໄປເຖິງຕຽງກ່າວວ່າ "ໃຜຈັກລູບຄຳແມ່ຍິງຊົ່ວມີກິ່ນເໝັນເນົ່າຄົນນີ້ໄດ້ນໍ" ຖົ່ມນ້ຳລາຍໃສ່ແລ້ວຍ່າງຈາກໄປ

ແມ່ໝ້າຍ ຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ບໍ່ມີຢາງອາຍ ທຸສິນ ມັກເວົ້າຕົວະ ແຕ່ກໍປະຕິນຍາວ່າ ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ເວົ້າຈິງ ມີສິນ ມີກັນລະຍານະທຳ ພວກທ່ານບໍ່ມີຄວາມເປັນສະມະນະ ບໍ່ມີຄວາມເປັນພາມ ຄວາມເປັນສະມະນະ ຄວາມເປັນພາມຂອງພວກທ່ານເສື່ອມສິ້ນໄປແລ້ວ ພວກທ່ານຈະເປັນສະມະນະ ເປັນພາມໄດ້ແນວໃດ ພວກທ່ານປາສະຈາກຄວາມເປັນສະມະນະ ປາສະຈາກຄວາມເປັນພາມ ເປັນຫຍັງ ພຣະສະມະນະອຸທາຍີ ຂໍເມຖຸນທຳກັບເຮົາແລ້ວກັບຖົ່ມນ້ຳລາຍໃສ່ ກ່າວວ່າ "ໃຜຈັກລູບຄຳແມ່ຍິງຊົ່ວມີກິ່ນ ເໝັນຄົນນີ້ໄດ້ນໍ" ແລ້ວຍ່າງຈາກໄປແນວນັ້ນນໍ ເຮົາມີອັນໃດທີ່ຊົ່ວ ມີອັນໃດທີ່ມີກິ່ນເໝັນ ເຮົາຊົ່ວກວ່າແມ່ຍິງຄົນອື່ນແນວໃດນໍ?"

ແມ່ນແມ່ຍິງພວກອື່ນກໍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ບໍ່ມີຢາງອາຍ ທຸສິນ ມັກກ່າວຕົວະ ຯລຯ ແມ່ໝ້າຍເຊັ່ນເຮົານີ້ມີອັນໃດຊົ່ວມີອັນໃດທີ່ມີກິ່ນເໝັນ ພວກເຮົາຊົ່ວກວ່າແມ່ຍິງອື່ນແນວໃດ?"

ພິກຂຸທັງຫຼາຍໄດ້ຍິນແມ່ຍິງເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອຸທາຍີ ຈຶ່ງເວົ້າສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ ແມ່ນບໍ?" ທ່ານທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງໄດ້ກ່າວສັນເສີນການໃຫ້ບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມແນວນັ້ນນໍ ໂມຄະບຸຣຸດ ເຮົາ

ສະແດງທຳໂດຍປະການຕ່າງ ໆ ເພື່ອຄາຍກຳໜັດ ບໍ່ແມ່ນເພື່ອຄວາມກຳໜັດ ຯລຯ ເຮົາບອກການລະງັບຄວາມກັດກຸ້ມຍ້ອນການໄວ້ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໘໑] **ກໍ ພິກຂຸໃດຖືກຣາຄະຄອບງຳແລ້ວ ມີຈິດປັ່ນປ່ວນ ກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ ດ້ວຍຄຳທີ່ພາດພິງເມຖຸນວ່າ "ນ້ອງສາວ ແມ່ຍິງໃດບຳເລີຜູ້ປະພຶດພົມມະຈັນ ຜູ້ມີສິນ ມີກັນລະຍານະທຳເຊັ່ນເຮົາດ້ວຍທຳນັ້ນ ການບຳເລີນີ້ຂອງແມ່ຍິງນັ້ນເປັນການບຳເລີຊັ້ນຍອດ" ເປັນສັງຄາທິເສດ**

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໔໘໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຖືກຣາຄະຄອບງຳແລ້ວ ຄື ມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ຄຳວ່າ ປັ່ນປ່ວນ ຄວາມວ່າ ຈິດກຳໜັດແລ້ວຊື່ວ່າປັ່ນປ່ວນແດ່ ຈິດໂກດແລ້ວຊື່ວ່າປັ່ນປ່ວນແດ່ ຈິດຫຼົງແລ້ວຊື່ວ່າປັ່ນປ່ວນແດ່ ຈິດກຳໜັດແລ້ວພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າປັ່ນປ່ວນ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ແມ່ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແຕ່ເປັນແມ່ຍິງທີ່ຮູ້ດຽງສາ ສາມາດເຂົ້າໃຈຄຳເວົ້າສຸພາສິດ ທຸບພາສິດ ຄຳຫຍາບແລະຄຳສຸພາບ

ຄຳວ່າ ຕໍ່ໜ້າມາຕຸຄາມ ຄື ທີ່ໃກ້ແມ່ຍິງ ບໍ່ໄກຈາກແມ່ຍິງ

ຄຳວ່າ ຄວາມຕ້ອງການຂອງຕົນ ໄດ້ແກ່ ຄວາມຕ້ອງການຂອງຕົນ ເຫດຂອງຕົນ ຄວາມປະສົງຂອງຕົນ ການບຳເລີຂອງຕົນ

ຄຳວ່າ ນີ້ ຯລຯ ຊັ້ນຍອດ ຄື ນີ້ເປັນຍອດ ນີ້ປະເສີດທີ່ສຸດ ນີ້ເປັນຊັ້ນດີ ນີ້ສູງສຸດ ນີ້ເປັນສິ່ງເລີດ

ຄໍາວ່າ ແມ່ຍິງໃດ ໄດ້ແກ່ ແມ່ຍິງວັນນະກະສັດ ຫຼື ວັນນະພາມ ແມ່ຍິງວັນນະແພດ ຫຼື ແມ່ຍິງວັນນະສູດ

ຄໍາວ່າ ເຊັ່ນເຮົາ ຄື ເປັນກະສັດ ຫຼື ພາມ ແພດ ຫຼື ສູດ

ຄໍາວ່າ ມີສິນ ຄື ຜູ້ເວັ້ນຂາດຈາກປານາຕິບາດ ເວັ້ນຂາດຈາກອະທິນນາທານ ເວັ້ນຂາດຈາກມຸສາວາດ

ຄໍາວ່າ ຜູ້ປະພຶດພົມມະຈັນ ຄື ຜູ້ເວັ້ນຂາດຈາກເມຖຸນທໍາ

ທີ່ຊື່ວ່າ ມີກັນລະຍານະທໍາ ຄື ຜູ້ຊື່ວ່າມີທໍາງາມຍ້ອນສິນນັ້ນ ແລະພົມມະຈັນນັ້ນ

ຄໍາວ່າ ດ້ວຍທໍານັ້ນ ຄື ດ້ວຍເມຖຸນທໍາ

ຄໍາວ່າ ບໍາເລີ ຄື ອະພິຣົມ

ຄໍາວ່າ ດ້ວຍຄໍາທີ່ພາດພິງເມຖຸນ ຄື ດ້ວຍຄໍາເວົ້າທີ່ກ່ຽວດ້ວຍເມຖຸນທໍາ

ຄໍາວ່າ ເປັນສັງຄາທິເສດ ຄວາມວ່າ ສໍາລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ຯລຯ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ເປັນສັງຄາທິເສດ"

## ບົດພາຊະນີ

## ແມ່ຍິງ

[໔໙໓] (໑) ເປັນແມ່ຍິງ (໔) ພິກຂຸສໍາຄັນວ່າເປັນແມ່ຍິງ ແລະ ມີຄວາມກໍາໜັດ (໓) ພິກຂຸກ່າວສັນເສີນການບໍາເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ຕ້ອງອາບັດສັງຄາທິເສດ

(໑) ເປັນແມ່ຍິງ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ຯລຯ ສໍາຄັນວ່າເປັນບັນເດາະ ຯລຯ ສໍາຄັນວ່າເປັນຊາຍ ຯລຯ ສໍາຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກໍາໜັດ (໓) ພິກຂຸກ່າວສັນເສີນການບໍາເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ຕ້ອງອາບັດຖຸນລັດໄຈ

## ບັນເດາະ

(໑) ເປັນບັນເດາະ (໔) ພິກຂຸສໍາຄັນວ່າເປັນບັນເດາະ ແລະ ມີຄວາມກໍາໜັດ (໓) ພິກຂຸກ່າວສັນເສີນການບໍາເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ຕ້ອງອາບັດຖຸນລັດໄຈ

(໑) ເປັນບັນເດາະ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ຯລຯ ສໍາຄັນວ່າເປັນ ຊາຍ ຯລຯ ສໍາຄັນວ່າເປັນສັດເດຍຣັດສານ ຯລຯ ສໍາຄັນວ່າເປັນແມ່ຍິງ ແລະ ມີຄວາມກໍາໜັດ (໓) ພິກຂຸກ່າວສັນເສີນການບໍາເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ຕ້ອງອາບັດທຸກກົດ

## ຊາຍ

(໑) ເປັນຊາຍ (໔) ພິກຂຸສໍາຄັນວ່າເປັນຊາຍ ຯລຯ ບໍ່ແນ່ໃຈວ່າເປັນຊາຍ ຯລຯ ສໍາຄັນວ່າເປັນສັດເດຍຣັດສານ ຯລຯ ສໍາຄັນວ່າເປັນແມ່ຍິງ ຯລຯ ສໍາຄັນວ່າເປັນບັນເດາະ ແລະ ມີ

ຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າຊາຍ ຕ້ອງອາບັດທຸກກົດ

## ສັດເດຍຣັດສານ

(໑) ເປັນສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານ ຫລຶ ບໍ່ແນ່ໃຈວ່າເປັນສັດເດຍຣັດສານ ຫລຶ ສຳຄັນວ່າເປັນແມ່ຍິງ ຫລຶ ສຳຄັນວ່າເປັນບັນເດາະ ຫລຶ ສຳຄັນວ່າເປັນຊາຍ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າສັດເດຍຣັດສານ ຕ້ອງອາບັດທຸກກົດ

## ແມ່ຍິງ ໔ ຄົນ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໔ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງທັງ ໔ ຄົນ ຕ້ອງອາບັດສັງຄາທິເສດ ໔ ຕົວ

(໑) ເປັນແມ່ຍິງ ໔ ຄົນ (໔) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງທັງ ໔ ຄົນ ຫລຶ ສຳຄັນວ່າເປັນບັນເດາະ ຫລຶ ສຳຄັນວ່າເປັນຊາຍ ຫລຶ ສຳຄັນວ່າເປັນສັດເດຍຣັດສານ ແລະມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງທັງ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ

## ບັນເດາະ ໔ ຄົນ

(໑) ເປັນບັນເດາະ ໔ ຄົນ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໔ ຄົນ ແລະ ມີຄວາມກຳ ໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ທັງ ໔ ຄົນ ຕ້ອງອາບັດຖຸນລັດໄຈ ໔ ຕົວ

(໑) ເປັນບັນເດາະ ໔ ຄົນ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະທັງ ໔ ຄົນ ຫລຶ ສຳຄັນວ່າເປັນຊາຍ ຫລຶ ສຳຄັນວ່າເປັນສັດເດຍຣັດສານ ຫລຶ ສຳຄັນວ່າເປັນແມ່ຍິງແລະມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ທັງ ໔ ຄົນ ຕ້ອງອາບັດທຸກກົດ ໔ ຕົວ

## ຊາຍ ໔ ຄົນ ແລະສັດເດຍຣັດສານ ໔ ຕົວ

(໑) ເປັນຊາຍ ໔ ຄົນ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໔ ຄົນ ຫລຶ (໑) ສັດເດຍຣັດສານ ໔ ຕົວ (໔) ພິກຂຸສຳຄັນວ່າເປັນສັດເດຍຣັດສານທັງ ໔ ຕົວ ຫລຶ ບໍ່ແນ່ໃຈ ຫລຶ ສຳຄັນວ່າເປັນແມ່ຍິງ ຫລຶ ສຳຄັນວ່າເປັນບັນເດາະ ຫລຶ ສຳຄັນວ່າເປັນຊາຍ ແລະມີຄວາມກຳໜັດ

(໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າສັດເດຍຣັດສານທັງ ໒ ຕ້ອງອາບັດທຸກກົດ ໒ ຕົວ

## ແມ່ຍິງແລະບັນເດາະ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ແລະບັນເດາະທັງ ໒ ຄົນ ຕ້ອງອາບັດທຸກກົດກັບສັງຄາທິເສດ

(໑) ເປັນແມ່ຍິງ ແລະ ບັນເດາະ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ບັນເດາະທັງ ໒ ຄົນ ຯລຯ ຕ້ອງອາບັດທຸກກົດກັບຖຸນລັດໄຈ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ຕ້ອງອາບັດຖຸນລັດໄຈ ໒ ຕົວ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ແລະບັນເດາະທັງ ໒ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ

(໑) ເປັນແມ່ຍິງ ແລະ ຊາຍ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ຄົນ ແລະມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ແລະ ຊາຍທັງ ໒ ຄົນ ຕ້ອງອາບັດທຸກກົດກັບສັງຄາທິເສດ

(໑) ເປັນແມ່ຍິງ ແລະ ຊາຍ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ຊາຍທັງ ໒ ຄົນ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ແລະ ຊາຍທັງ ໒ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ

## ແມ່ຍິງ ແລະ ສັດເດຍຣັດສານ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໒) ພິກຂຸສຳຄັນວ່າເປັນແມ່ຍິງທັງ ໒ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ແລະສັດເດຍຣັດສານທັງ ໒ ຕ້ອງອາບັດທຸກກົດ ແລະ ສັງຄາທິເສດ

(໑) ເປັນແມ່ຍິງ ແລະ ສັດເດຍຣັດສານ (໒) ພິກຂຸບໍ່ແນ່ໃຈວ່າເປັນແມ່ຍິງ ແລະ ສັດເດຍຣັດສານທັງ ໒ ຯລຯ ສຳຄັນວ່າເປັນບັນເດາະ ຯລຯ ສຳຄັນວ່າເປັນຊາຍ ຯລຯ ສຳຄັນວ່າເປັນສັດເດຍຣັດສານ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າແມ່ຍິງ ແລະ ສັດເດຍຣັດສານທັງ ໒ ຕ້ອງອາບັດທຸກກົດກັບຖຸນລັດໄຈ

## ບັນເດາະ ແລະ ຊາຍ

(໑) ເປັນບັນເດາະ ແລະ ຊາຍ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໒ ຄົນ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ແລະ ຊາຍທັງ ໒ ຄົນ ຕ້ອງອາບັດທຸກກົດກັບຖຸນລັດໄຈ

(໑) ເປັນບັນເດາະ ແລະ ຊາຍ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ແລະ ຊາຍທັງ ໒ ຄົນ ຫລຫ ສຳຄັນວ່າເປັນຊາຍ ຫລຫ ສຳຄັນວ່າເປັນສັດເດຍຣັດສານ ຫລຫ ສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ແລະ ຊາຍທັງ ໒ ຄົນ ຕ້ອງອາບັດທຸກກົດ ໒ ຕົວ

## ບັນເດາະ ແລະ ສັດເດຍຣັດສານ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນບັນເດາະທັງ ໒ ແລະມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ແລະສັດເດຍຣັດສານທັງ ໒ ຕ້ອງອາບັດທຸກກົດກັບຖຸນລັດໄຈ

(໑) ເປັນບັນເດາະ ແລະ ສັດເດຍຣັດສານ (໔) ພິກຂຸບໍ່ແນ່ໃຈວ່າເປັນບັນເດາະ ແລະ ສັດເດຍຣັດສານທັງ ໒ ຫລຫ ສຳຄັນວ່າເປັນຊາຍ ຫລຫ ສຳຄັນວ່າເປັນສັດເດຍຣັດສານ ຫລຫ ສຳຄັນວ່າເປັນແມ່ຍິງ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ ໜ້າບັນເດາະ ແລະ ສັດເດຍຣັດສານທັງ ໒ ຕ້ອງອາບັດທຸກກົດ ໒ ຕົວ

(໑) ເປັນຊາຍ ແລະ ສັດເດຍຣັດສານ (໔) ພິກຂຸສຳຄັນວ່າເປັນຊາຍທັງ ໒ ຫລຫ ພິກຂຸບໍ່ແນ່ໃຈວ່າເປັນຊາຍ ແລະ ສັດເດຍຣັດສານ ຫລຫ ສຳຄັນວ່າເປັນສັດເດຍຣັດສານ ຫລຫ ສຳຄັນວ່າເປັນແມ່ຍິງ ຫລຫ ສຳຄັນວ່າເປັນບັນເດາະ ແລະ ມີຄວາມກຳໜັດ (໓) ພິກຂຸກ່າວສັນເສີນການບຳເລີຄວາມຕ້ອງການຂອງຕົນຕໍ່ໜ້າຊາຍ ແລະ ສັດເດຍຣັດສານທັງ ໒ ຕ້ອງອາບັດທຸກກົດ ໒ ຕົວ

## ອະນາປັດຕິວານ

## ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໘໔] ໑. ພິກຂຸຜູ້ກ່າວວ່າ “ຈົ່ງບຳລຸງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ບໍຣິຂານຄືຢາປິ່ນປົວພະຍາດ”

໒. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

## ຄາຖາລວມວິນີຕະວັດຖຸ

## ເລື້ອງທີ່ຊົງວິນິໄສແລ້ວ

ເລື້ອງແມ່ຍິງເປັນໝັນຕ້ອງການມີບຸດ ໑ ເລື້ອງ
ເລື້ອງແມ່ຍິງຜູ້ມີບຸດຖີ່ບໍ່ຕ້ອງການມີບຸດ ໑ ເລື້ອງ
ເລື້ອງແມ່ຍິງຕ້ອງການເປັນທີ່ຮັກຂອງສາມີ ໑ ເລື້ອງ
ເລື້ອງແມ່ຍິງຕ້ອງການມີໂຊກ ໑ ເລື້ອງ
ເລື້ອງແມ່ຍິງຕ້ອງການຖວາຍທານອັນເລີດ ໑ ເລື້ອງ
ເລື້ອງແມ່ຍິງຕ້ອງການອຸປັດຖາກດ້ວຍສິ່ງທີ່ເລີດ ໑ ເລື້ອງ
ເລື້ອງແມ່ຍິງຕ້ອງການໄປສຸກຄະຕິ ໑ ເລື້ອງ

## ວິນີຕະວັດຖຸ

## ເລື້ອງແມ່ຍິງເປັນໝັນຕ້ອງການມີບຸດ ໑ ເລື້ອງ

[๘๗๕] ສະໄໝນັ້ນ ແມ່ຍິງເປັນໝັນຄົນໜຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ “ຄູບາ ເຮັດແນວໃດຂ້ານ້ອຍຈຶ່ງຈະມີບຸດ” ພິກຂຸຕອບວ່າ “ນ້ອງສາວ ຖ້າເຊັ່ນນັ້ນທ່ານຈົ່ງຖວາຍທານ ອັນເລີດ” “ຄູບາ ອັນໃດທີ່ຊື່ວ່າທານອັນເລີດ” “ເມຖຸນທຳ” ທ່ານເກີດຄວາມກັງວົນ ໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ” (ເລື້ອງທີ ໑)

## ເລື້ອງແມ່ຍິງຜູ້ມີບຸດຖີ່ບໍ່ຕ້ອງການມີບຸດ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງມີບຸດຖີ່ຈຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ “ຄູບາ ເຮັດແນວໃດຂ້ານ້ອຍຈຶ່ງຈະບໍ່ມີບຸດ” “ນ້ອງສາວ ຖ້າແນວນັ້ນທ່ານຈົ່ງຖວາຍທານອັນເລີດ” “ຄູບາ ອັນໃດຊື່ວ່າທານອັນເລີດ” “ເມຖຸນທຳ” ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ “ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ” (ເລື້ອງທີ ๘)

## ເລື້ອງແມ່ຍິງຕ້ອງການເປັນທີ່ຮັກຂອງສາມີ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ “ຄູບາ ເຮັດແນວໃດ ຂ້ານ້ອຍຈຶ່ງຈະເປັນທີ່ຮັກຂອງສາມີ” “ນ້ອງສາວ ຖ້າແນວນັ້ນທ່ານຈົ່ງຖວາຍທານອັນເລີດ” “ຄູບາ ອັນໃດຊື່ວ່າທານອັນເລີດ” “ເມຖຸນທຳ” ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວ

ບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໓)

## ເລື້ອງແມ່ຍິງຕ້ອງການມີໂຊກ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ "ຄູບາ ເຮັດແນວໃດຂ້ານ້ອຍຈຶ່ງຈະມີໂຊກ" "ນ້ອງສາວ ຖ້າແນວນັ້ນທ່ານຈົ່ງຖວາຍທານອັນເລີດ" "ຄູບາ ອັນໃດຊື່ວ່າທານອັນເລີດ" "ເມຖຸນທຳ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໔)

## ເລື້ອງແມ່ຍິງຕ້ອງການຖວາຍທານອັນເລີດ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ "ຄູບາ ຂ້ານ້ອຍຈະຖວາຍອັນໃດດີແກ່ຄູບາ" "ນ້ອງສາວ ຖ້າແນວນັ້ນທ່ານຈົ່ງຖວາຍທານອັນເລີດ" "ຄູບາ ອັນໃດຊື່ວ່າທານອັນເລີດ" "ເມຖຸນທຳ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໕)

## ເລື້ອງແມ່ຍິງຕ້ອງການອຸປັດຖາກດ້ວຍສິ່ງທີ່ເລີດ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ "ຄູບາ ຂ້ານ້ອຍຈະອຸປັດຖາກຄູບາດ້ວຍອັນໃດດີ" "ນ້ອງສາວ ດ້ວຍທານອັນເລີດ" "ຄູບາ ອັນໃດຊື່ວ່າທານອັນເລີດ" "ເມຖຸນທຳ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໖)

## ເລື້ອງແມ່ຍິງຕ້ອງການໄປສຸກຄະຕິ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຖາມພິກຂຸທີ່ນາງອຸບປະຖຳວ່າ "ຄູບາ ຂ້ານ້ອຍຈະໄປສຸກຄະຕິໄດ້ແນວໃດ" "ນ້ອງສາວ ຖ້າແນວນັ້ນ ທ່ານຈົ່ງຖວາຍທານອັນເລີດ" "ຄູບາ ອັນໃດຊື່ວ່າທານອັນເລີດ" "ເມຖຸນທຳ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານຕ້ອງອາບັດສັງຄາທິເສດ" (ເລື້ອງທີ ໗)

**ອັດຕະກາມະປາຣິຈະຣິຍະສິກຂາບົດທີ່ ໔ ຈົບ**

# ໕. ສັນຈະຣິດຕະສິກຂາບົດ

## ວ່າດ້ວຍການເປັນສື່

### ເລື້ອງພຣະອຸທາຍີ

[໔໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະອຸທາຍີເປັນພຣະທີ່ໃກ້ຊິດຕະກູນໃນນະຄອນສາວັດຖີ ໄປມາຫາສູ່ຕະກູນເປັນຈຳນວນຫຼາຍທີ່ຕົນເຫັນວ່າມີເດັກໜຸ່ມທີ່ຍັງບໍ່ມີພັນລະຍາຫຼືເດັກສາວທີ່ຍັງບໍ່ມີສາມີ ກ່າວຍ້ອງຍໍຄຸນສົມບັດຂອງເດັກສາວໃຫ້ມານດາບິດາຂອງເດັກໜຸ່ມຟັງວ່າ “ສາວນ້ອຍຂອງຕະກູນນັ້ນ ຮູບງາມ ໜ້າເບິ່ງ ໜ້າຊົມ ສະຫຼາດຫຼັກແຫຼມມີສະຕິປັນຍາດີ ດຸໝັ່ນບໍ່ຂີ້ຄ້ານ ສາວນ້ອຍຄົນນັ້ນເໝາະສົມກັບຊາຍໜຸ່ມຄົນນີ້”

ມານດາບິດາຂອງເດັກໜຸ່ມກໍກ່າວວ່າ “ຄູບາ ຄົນເຫຼົ່ານັ້ນບໍ່ຮູ້ຈັກພວກເຮົາວ່າ “ເປັນໃຜ ຫຼືພວກພ້ອງຂອງຜູ້ໃດ” ຖ້າຄູບາຈະເວົ້າທາບທາມຕິດຕໍ່ໃຫ້ ພວກເຮົາກໍຈະສູ່ຂໍເດັກສາວນັ້ນມາໃຫ້ເດັກ ໜຸ່ມຄົນນີ້” ພຣະອຸທາຍີນັ້ນໄປກ່າວຍ້ອງຍໍຄຸນສົມບັດຂອງເດັກໜຸ່ມໃຫ້ມານດາບິດາຂອງເດັກສາວຟັງວ່າ “ຊາຍໜຸ່ມຂອງຕະກູນນັ້ນ ຮູບງາມ ໜ້າເບິ່ງ ໜ້າຊົມ ສະຫຼາດຫຼັກແຫຼມມີສະຕິປັນຍາດີ ດຸໝັ່ນບໍ່ຂີ້ຄ້ານ ຊາຍໜຸ່ມຄົນນັ້ນເໝາະສົມກັບສາວນ້ອຍຄົນນີ້” ຂ້າງມານດາບິດາຂອງເດັກສາວກໍກ່າວວ່າ “ຄູບາ ຄົນເຫຼົ່ານັ້ນບໍ່ຮູ້ຈັກພວກເຮົາວ່າ “ເປັນໃຜ ຫຼື ພວກພ້ອງຂອງຜູ້ໃດ” ການທີ່ຈະຍົກສາວນ້ອຍໃຫ້ເຂົາເປັນການບໍ່ສົມຄວນ ຖ້າຄູບາຈະຊ່ອຍໄປເວົ້າໃຫ້ເຂົາມາສູ່ຂໍ ພວກຂ້າພະເຈົ້າກໍຈະຍົກສາວນ້ອຍຄົນນີ້ໃຫ້ຊາຍໜຸ່ມຄົນນັ້ນ” ດ້ວຍວິທີແບບນີ້ ພຣະອຸທາຍີ ຈຶ່ງໃຫ້ມານດາບິດາຂອງໜຸ່ມສາວເຮັດອາວາຫະມຸງຄຸນແດ່ ວິວາຫະມຸງຄຸນແດ່ ຫຼື ຊັກນຳໃຫ້ສູ່ຂໍໝັ້ນໝາຍກັນແດ່

[໔໙໕] ສະໄໝນັ້ນ ບຸດສາວຂອງແມ່ໝ້າຍຜູ້ເຄີຍເປັນພັນລະຍາໂຫນຄົນໜຶ່ງ ມີຮູບງາມໜ້າເບິ່ງ ໜ້າຊົມ ພວກສາວົກອາຊີວົກຈາກໝູ່ບ້ານອື່ນມາບອກພັນລະຍາໂຫນນັ້ນວ່າ “ຍາແມ່ທ່ານຈົ່ງຍົກເດັກສາວຄົນນີ້ ໃຫ້ຊາຍໜຸ່ມຂອງພວກເຮົາເທີ້ນ”

ພັນລະຍາໂຫນຕອບວ່າ “ຂ້ານ້ອຍບໍ່ຮູ້ວ່າພວກທ່ານເປັນໃຜ ຫຼື ເປັນພວກພ້ອງຂອງຜູ້ໃດອີກປະການໜຶ່ງ ເດັກສາວຄົນນີ້ເປັນບຸດສາວຄົນດຽວຂອງຂ້ານ້ອຍ ນາງຕ້ອງໄປຢູ່ບ້ານອື່ນຂ້ານ້ອຍຍົກໃຫ້ບໍ່ໄດ້”

ຊາວບ້ານກ່າວກັບພວກສາວົກອາຊີວົກວ່າ “ຄູບາ ພວກທ່ານມາດ້ວຍທຸຣະອັນໃດກັນນໍ?”

ພວກສາວົກອາຊີວົກຕອບວ່າ "ພວກເຮົາມາຂໍບຸດສາວຈາກພັນລະຍາໂທນຊື່ນັ້ນໃນທີ່ນີ້ໃຫ້ແກ່ເດັກໜຸ່ມຂອງພວກເຮົາ ແຕ່ນາງປະຕິເສດວ່າ "ຂ້ານ້ອຍບໍ່ຮູ້ວ່າພວກທ່ານເປັນໃຜ ໆລໆ ຂ້ານ້ອຍຍົກໃຫ້ບໍ່ໄດ້"

ຊາວບ້ານແນະນຳວ່າ "ພວກທ່ານ ໄປຂໍແມ່ຍິງສາວຈາກພັນລະຍາໂທນດ້ວຍຕົນເອງເຮັດຫຍັງ ໃຫ້ໄປເວົ້າກັບພຣະອຸທາຍີບໍ່ດີກວ່າບໍ? ພຣະອຸທາຍີສາມາດເວົ້າໃຫ້ເຂົາຍິນຍອມຍົກໃຫ້ໄດ້"

ພວກສາວົກອາຊີວົກໄປຫາພຣະອຸທາຍີເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ກ່າວວ່າ "ທ່ານ ພວກຂ້ານ້ອຍມາຂໍບຸດສາວກັບພັນລະຍາໂທນຊື່ນັ້ນ ໃນທີ່ນີ້ໃຫ້ແກ່ເດັກໜຸ່ມຂອງພວກຂ້ານ້ອຍ ແຕ່ຖືກນາງປະຕິເສດວ່າ "ຂ້ານ້ອຍບໍ່ຮູ້ວ່າພວກທ່ານເປັນໃຜ ໆລໆ ຂ້ານ້ອຍຍົກໃຫ້ບໍ່ໄດ້" ຂໍໃຫ້ຄູບາຊ່ອຍພວກຂ້ານ້ອຍດ້ວຍເທີ້ນ ຊ່ອຍເວົ້າໃຫ້ພັນລະຍາໂທນຍອມຍົກບຸດສາວໃຫ້ແກ່ເດັກໜຸ່ມຂອງພວກຂ້ານ້ອຍດ້ວຍເທີ້ນ"

ລຳດັບນັ້ນພຣະອຸທາຍີຈຶ່ງເຂົ້າໄປຫາພັນລະຍາໂທນເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ຖາມວ່າ "ເປັນຫຍັງ ທ່ານບໍ່ຍົກບຸດສາວໃຫ້ຄົນເຫຼົ່ານີ້ໄປບໍ"

ພັນລະຍາໂທນຕອບວ່າ "ຂ້ານ້ອຍບໍ່ຮູ້ວ່າຄົນເຫຼົ່ານີ້ເປັນໃຜ ຫຼື ເປັນພວກພ້ອງຂອງຜູ້ໃດອີກປະການໜຶ່ງ ເດັກສາວນີ້ເປັນບຸດສາວຄົນດຽວຂອງຂ້ານ້ອຍ ນາງຈະຕ້ອງໄປຢູ່ບ້ານອື່ນ ຂ້ານ້ອຍຈຶ່ງບໍ່ຢາກຍົກໃຫ້"

"ທ່ານຈົ່ງຍົກໃຫ້ໄປເທີ້ນ ອາດຕະມາຮູ້ຈັກຄົນພວກນີ້ດີ"

"ຖ້າຄູບາຮູ້ຈັກ ຂ້ານ້ອຍກໍຈະຍົກໃຫ້"

ຕໍ່ມາ ພັນລະຍາໂທນຈຶ່ງຍົກບຸດສາວໃຫ້ສາວົກອາຊີວົກ ເມື່ອພວກເຂົາພາເດັກສາວໄປໄດ້ລ້ຽງດູຢ່າງສະໃພ້ ເດືອນດຽວເທົ່ານັ້ນ ຕໍ່ຈາກນັ້ນລ້ຽງດູຢ່າງຂ້າທາດຍິງ

ຕໍ່ມາ ສາວນ້ອຍສົ່ງຂ່າວໄປເຖິງມານດາວ່າ "ແມ່ເອີຍ ລູກກຳລັງລຳບາກຕົກທຸກໄດ້ຍາກຫາຄວາມສຸກບໍ່ໄດ້ເລີຍ ພວກເຂົາລ້ຽງດູລູກໃນຖານະແມ່ຍິງສະໃພ້ເດືອນດຽວເທົ່ານັ້ນ ຕໍ່ຈາກນັ້ນລ້ຽງດູຢ່າງຂ້າທາດຍິງ ແມ່ໂຜດມາຮັບລູກກັບໄປດ້ວຍເທີ້ນ"

ເມື່ອຮູ້ຂ່າວ ພັນລະຍາໂທນຈຶ່ງໄປຫາພວກສາວົກອາຊີວົກເຖິງທີ່ຢູ່ ກ່າວວ່າ "ພວກທ່ານຢ່າລ້ຽງດູລູກສາວເຮົາຢ່າງຂ້າທາດຍິງ ໂຜດລ້ຽງດູຢ່າງສະໃພ້ເທີ້ນ"

ພວກສາວົກອາຊີວົກຕອບວ່າ "ພວກເຮົາບໍ່ໄດ້ຮັບຮອງ ແລະ ຕົກລົງໄວ້ກັບທ່ານ ແຕ່ຮັບຮອງແລະຕົກລົງໄວ້ກັບຄູບາຕ່າງຫາກ ຫຼີກໄປ ພວກເຮົາບໍ່ຮູ້ຈັກທ່ານ"

ເມື່ອພັນລະຍາໂທນຖືກພວກສາວົກອາຊີວົກເວົ້າຮຸກຮານ ຈຶ່ງເດີນທາງກັບນະຄອນສາວັດຖີ ຝ່າຍລູກສາວກໍຍັງສົ່ງຂ່າວໄປເຖິງມານດາອີກເປັນຄັ້ງທີ ໔ ວ່າ "ແມ່ເອີຍ ລູກກຳລັງລຳບາກ ຕົກທຸກໄດ້ຍາກ ຫາຄວາມສຸກບໍ່ໄດ້ເລີຍ ຯລຯ ແມ່ໂຜດມາຮັບລູກກັບເມືອແດ່ເທີ້ນ"

ພັນລະຍາໂທນຈຶ່ງໄປຫາພຣະອຸທາຍີເຖິງທີ່ຢູ່ແລ້ວກ່າວວ່າ "ຄູບາ ໄດ້ຂ່າວມາວ່າ ບຸດສາວຂອງຂ້ານ້ອຍກຳລັງລຳບາກ ຕົກທຸກໄດ້ຍາກ ບໍ່ໄດ້ຮັບຄວາມສຸກ ໄດ້ຮັບການລ້ຽງດູຢ່າງສະໃພ້ເດືອນດຽວເທົ່ານັ້ນ ຈາກນັ້ນຖືກລ້ຽງດູຢ່າງນາງທາສີ ຄູບາຄວນໄປຂໍຮ້ອງວ່າ ຢ່າລ້ຽງດູສາວນ້ອຍຢ່າງຂ້າທາດຍິງ ໂຜດລ້ຽງດູຢ່າງສະໃພ້"

ຕໍ່ມາພຣະອຸທາຍີໄດ້ໄປຫາພວກສາວົກອາຊີວົກເຖິງທີ່ຢູ່ຂໍຮ້ອງວ່າ "ພວກທ່ານຢ່າລ້ຽງດູສາວນ້ອຍຢ່າງຂ້າທາດຍິງ ໂຜດລ້ຽງດູຢ່າງສະໃພ້ດ້ວຍເທີ້ນ"

ພວກສາວົກອາຊີວົກຕອບວ່າ "ພວກເຮົາບໍ່ໄດ້ຮັບຮອງ ແລະ ຕົກລົງໄວ້ກັບທ່ານ ແຕ່ພວກເຮົາຮັບຮອງ ແລະ ຕົກລົງໄວ້ກັບພັນລະຍາໂທນຕ່າງຫາກ ເປັນພຣະຕ້ອງບໍ່ວຸ້ນວາຍ ຕ້ອງເປັນພຣະທີ່ດີ ຫຼືກໄປພວກເຮົາບໍ່ຮູ້ຈັກທ່ານ"

ເມື່ອຖືກພວກສາວົກອາຊີວົກເວົ້າຮຸກຮານ ພຣະອຸທາຍີ ຈຶ່ງເດີນທາງກັບນະຄອນສາວັດຖີ ຝ່າຍສາວນ້ອຍກໍຍັງສົ່ງຂ່າວໄປເຖິງມານດາອີກເປັນຄັ້ງທີ ໓ ວ່າ "ແມ່ເອີຍ ລູກກຳລັງລຳບາກ ຕົກທຸກໄດ້ຍາກ ຫາຄວາມສຸກບໍ່ໄດ້ເລີຍ ຯລຯ ແມ່ໂຜດມາຮັບລູກກັບເມືອແດ່ເທີ້ນ"

ຝ່າຍພັນລະຍາໂທນກໍເຂົ້າໄປຫາພຣະອຸທາຍີເຖິງທີ່ຢູ່ ແລ້ວເວົ້າເປັນຄັ້ງທີ ໔ ວ່າ "ຄູບາ ໄດ້ຂ່າວມາວ່າ ບຸດສາວຂອງຂ້ານ້ອຍກຳລັງລຳບາກ ຕົກທຸກໄດ້ຍາກ ຯລຯ ໂຜດລ້ຽງນາງຢ່າງສະໃພ້"

ພຣະອຸທາຍີກ່າວວ່າ "ອາດຕະມາຖືກພວກສາວົກອາຊີວົກເວົ້າຮຸກຮານມາຄັ້ງໜຶ່ງແລ້ວ ທ່ານໄປເອງເທີ້ນ ອາດຕະມາຈະບໍ່ໄປ"

## ນິນທາແລະສັນເສີນພຣະອຸທາຍີ

[໔໙໗] ຄັ້ງນັ້ນ ພັນລະຍາໂທນໄດ້ຕຳໜິ ປະນາມ ໂພນທະນາວ່າ "ຂໍໃຫ້ພຣະອຸທາຍີລຳບາກຕົກທຸກໄດ້ຍາກ ຢ່າໄດ້ມີຄວາມສຸກສະບາຍເໝືອນບຸດສາວຂອງຕົນ ທີ່ກຳລັງລຳບາກ ຕົກທຸກໄດ້ຍາກ ບໍ່ໄດ້ຄວາມສຸກສະບາຍຍ້ອນມີແມ່ຍ່າ ພໍ່ປູ່ ແລະສາມີຊົ່ວ"

ແມ່ນລູກສາວກໍຕຳໜິ ປະນາມ ໂພນທະນາພຣະອຸທາຍີວ່າ "ຂໍໃຫ້ພຣະອຸທາຍີລຳບາກ ຕົກທຸກໄດ້ຍາກ ຢ່າໄດ້ມີຄວາມສຸກ ເໝືອນເຮົາທີ່ຕ້ອງກຳລັງລຳບາກ ຕົກທຸກໄດ້ຍາກ ບໍ່ໄດ້ຄວາມສຸກສະ ບາຍ ຍ້ອນມີແມ່ຍ່າ ພໍ່ປູ່ ແລະ ສາມີຊົ່ວ"

ແມ່ນແມ່ຍິງອື່ນ ໆ ທີ່ບໍ່ພໍໃຈແມ່ຍ່າ ພໍ່ປູ່ ແລະສາມີ ຕ່າງປ້ອຍສາບແຊ່ງພຣະອຸທາຍີ ວ່າ "ຂໍໃຫ້ພຣະອຸທາຍີລຳບາກ ຕົກທຸກໄດ້ຍາກ ໆລໆ ເໝືອນເຮົາທີ່ລຳບາກ ຍ້ອນມີແມ່ຍ່າ ພໍ່ປູ່ ແລະສາມີຊົ່ວ"

ຝ່າຍແມ່ຍິງທີ່ພໍໃຈແມ່ຍ່າ ພໍ່ປູ່ ແລະ ສາມີ ຕ່າງໃຫ້ພອນວ່າ "ຂໍໃຫ້ພຣະອຸທາຍີຈົ່ງມີຄວາມ ສຸກ ຄວາມຈະເລີນເໝືອນພວກເຮົາ ທີ່ມີຄວາມສຸກຄວາມຈະເລີນ ຍ້ອນມີແມ່ຍ່າ ພໍ່ປູ່ ແລະສາມີດີ"

ພວກພິກຂຸໄດ້ຍິນແມ່ຍິງບາງພວກປ້ອຍ ສາບແຊ່ງ ບາງພວກໃຫ້ພອນ ບັນດາພິກຂຸຜູ້ມັກ ໜ້ອຍສັນໂດດ ໆລໆ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸທາຍີຈຶ່ງເປັນສື່ແນວນັ້ນນໍ?" ເມື່ອພິກຂຸເຫຼົ່ານັ້ນຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານເປັນສື່ແມ່ນບໍ?" ທ່ານທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແນວນີ້ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງເປັນສື່ແນວນັ້ນນໍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໙໙] **ກໍ ພິກຂຸໃດ ເຮັດໜ້າທີ່ເປັນສື່ ຄື ບອກຄວາມປະສົງຂອງຊາຍແກ່ແມ່ຍິງກໍດີ ບອກຄວາມປະສົງຂອງແມ່ຍິງແກ່ຊາຍກໍດີ ເພື່ອໃຫ້ເປັນພັນລະຍາ ຫຼື ເປັນຊູ້ຮັກກັນ ເປັນສັງຄາທິເສດ**

ສິກຂາບົດນີ້ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວແນວນີ້

### ເລື້ອງພຣະອຸທາຍີ ຈົບ

## ເລື້ອງນັກເລງແມ່ຍິງ

[໕໐໐] ສະໄໝນັ້ນ ພວກນັກເລງຈຳນວນຫຼາຍພາກັນໄປທ່ຽວລິ້ນເລີ່ງໃນອຸທະຍານ ສົ່ງຊາຍເປັນສື່ໄປສຳນັກແມ່ຍິງແພດສະຫຍາຄົນໜຶ່ງດ້ວຍສັ່ງວ່າ "ເຊີນນາງມາເທີ້ນ ພວກເຮົາຈັກໄປທ່ຽວລິ້ນເລີ່ງໃນອຸທະຍານນຳກັນ"

ແມ່ຍິງແພດສະຫຍາຕອບວ່າ "ອ້າຍເອີຍ ພວກເຮົາບໍ່ຮູ້ວ່າພວກທ່ານເປັນໃຜ ຫຼື ເປັນພວກພ້ອງຂອງຜູ້ໃດ ອີກປະການໜຶ່ງ ພວກເຮົາມີຊັບສົມບັດຫຼາຍ ມີເຄື່ອງປະດັບຫຼາຍ ຖ້າຈະຕ້ອງອອກໄປນອກເມືອງພວກເຮົາບໍ່ໄປ"

ເມື່ອແລ້ວຊາຍຜູ້ເປັນສື່ແຈ້ງເລື້ອງນັ້ນໃຫ້ພວກນັກເລງໃຫ້ຮູ້ ເມື່ອຊາຍຜູ້ເປັນສື່ແຈ້ງໃຫ້ຮູ້ແລ້ວ ຊາຍອີກຄົນໜຶ່ງບອກພວກນັກເລງວ່າ "ພວກທ່ານໄປອ້ອນວອນແມ່ຍິງແພດສະຫຍາເຮັດຫຍັງ ຄວນໄປບອກພຣະອຸທາຍີບໍ່ດີກວ່າບໍ? ທ່ານຈະສົ່ງນາງມາໃຫ້ພວກເຮົາເອງ"

ເມື່ອເຂົາເວົ້າແນວນັ້ນ ອຸປາສິກາຄົນໜຶ່ງເວົ້າແຍ້ງວ່າ "ທ່ານຢ່າເວົ້າແນວນັ້ນ ການເຮັດແນວນັ້ນບໍ່ເໝາະສົມແກ່ພຣະສະມະນະເຊື້ອສາຍສາກະຍະບຸດ ພຣະອຸທາຍີຈະບໍ່ເຮັດເຊັ່ນນັ້ນ"

ເມື່ອອຸປາສິກາເວົ້າແນວນີ້ ພວກນັກເລງຈຶ່ງພະນັນກັນວ່າ "ພຣະອຸທາຍີຈະເຮັດຫຼືບໍ່ເຮັດ" ນັກເລງເຫຼົ່ານັ້ນເຂົ້າໄປຫາພຣະອຸທາຍີເຖິງທີ່ຢູ່ແລ້ວຂາບຮຽນທ່ານວ່າ "ຄູບາ ພວກຂ້ານ້ອຍເຂົ້າໄປທ່ຽວລິ້ນເລີ່ງໃນອຸທະຍານ ໄດ້ສົ່ງຊາຍເປັນສື່ໄປຫາແມ່ຍິງແພດສະຫຍາຊື່ນັ້ນ ວ່າ "ຂໍໃຫ້ນາງມາ ພວກເຮົາຈະພາໄປທ່ຽວລິ້ນເລີ່ງໃນອຸທະຍານ" ນາງຕອບວ່າ "ອ້າຍເອີຍ ພວກເຮົາບໍ່ຮູ້ວ່າພວກທ່ານເປັນໃຜ ຫຼື ເປັນພວກພ້ອງຂອງຜູ້ໃດ ອີກປະການໜຶ່ງ ພວກເຮົາມີເຄື່ອງປະດັບຫຼາຍ ຖ້າຈະຕ້ອງອອກໄປນອກເມືອງ ພວກເຮົາບໍ່ໄປ" ຂໍຄູບາໂຜດຫາທາງສົ່ງແມ່ຍິງແພດສະຫຍາຄົນນັ້ນ ມາໃຫ້ແກ່ພວກຂ້ານ້ອຍດ້ວຍເທີ້ນ"

ລຳດັບນັ້ນ ພຣະອຸທາຍີເຂົ້າໄປຫາແມ່ຍິງແພດສະຫຍາເຖິງທີ່ຢູ່ຖາມວ່າ "ເປັນຫຍັງນາງຈຶ່ງບໍ່ໄປຫາພວກນັກເລງພວກນັ້ນ"

ນາງຕອບວ່າ "ພວກຂ້ານ້ອຍ ບໍ່ຮູ້ວ່າ ຄົນພວກນີ້ເປັນໃຜ ຫຼື ເປັນພວກພ້ອງຂອງຜູ້ໃດ ອີກປະການໜຶ່ງ ພວກຂ້ານ້ອຍມີຊັບສົມບັດຫຼາຍ ມີເຄື່ອງປະດັບຫຼາຍ ຖ້າຈະຕ້ອງອອກໄປນອກເມືອງ ພວກຂ້ານ້ອຍບໍ່ໄປ ຂ້ານ້ອຍ"

"ທ່ານຈົ່ງໄປຫາພວກນັກເລງພວກນັ້ນເທີ້ນ ອາດຕະມາຮູ້ຈັກພວກເຂົາດີ"

"ຖ້າຄູບາຮູ້ຈັກ ພວກຂ້ານ້ອຍກໍຈະໄປ"

ລຳດັບນັ້ນ ພວກນັກເລງໄດ້ພາແມ່ຍິງແພດສະຫຍາຄົນນັ້ນໄປທ່ຽວໃນອຸທະຍານ ຕໍ່ມາ ອຸປາສິກາ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອຸທາຍີ ຈຶ່ງເປັນສື່ເວົ້າໃຫ້ຢູ່ຮ່ວມກັນຊົ່ວຄາວແນວນີ້ນໍ?"

ພວກພິກຂຸໄດ້ຍິນອຸປາສິກາຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸທາຍີ ຈຶ່ງເປັນສື່ໃຫ້ຢູ່ຮ່ວມກັນຊົ່ວຄາວແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິ ພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານເປັນສື່ໃຫ້ຢູ່ຮ່ວມກັນຊົ່ວຄາວ ແມ່ນບໍ?" ພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແບບນີ້ ບໍ່ສົມຄວນ ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງເປັນສື່ໃຫ້ຢູ່ຮ່ວມກັນຊົ່ວຄາວແບບນັ້ນນໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໓໐໑] **ອັນໜຶ່ງ ພິກຂຸໃດເຮັດໜ້າທີ່ເປັນສື່ ຄື ບອກຄວາມປະສົງຂອງຊາຍແກ່ແມ່ຍິງກໍດີ ບອກຄວາມປະສົງຂອງແມ່ຍິງແກ່ຊາຍກໍດີ ເພື່ອໃຫ້ເປັນພັນລະຍາ ຫຼື ເປັນຊູ້ຮັກກັນ ໂດຍທີ່ສຸດແມ່ນເພື່ອໃຫ້ຢູ່ຮ່ວມກັນຊົ່ວຄາວ ເປັນສັງຄາທິເສດ**

### ເລື່ອງນັກເລງແມ່ຍິງ ຈົບ

## ສິກຂາບົດວິພັງ

[໓໐໔] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ເຮັດໜ້າທີ່ເປັນສື່ ຄວາມວ່າ ໄປຫາຝ່າຍຊາຍຕາມທີ່ແມ່ຍິງຂໍຮ້ອງ ຫຼື ໄປຫາຝ່າຍແມ່ຍິງຕາມທີ່ຊາຍຂໍຮ້ອງ

ຄຳວ່າ ບອກຄວາມປະສົງຂອງຊາຍແກ່ແມ່ຍິງກໍດີ ຄື ແຈ້ງຄວາມປາຖະໜາຂອງຊາຍແກ່ແມ່ຍິງ

ຄຳວ່າ ບອກຄວາມປະສົງຂອງແມ່ຍິງແກ່ຊາຍກໍດີ ຄື ແຈ້ງຄວາມປາຖະໜາ ຄວາມຕ້ອງການຂອງແມ່ຍິງແກ່ຊາຍ

ຄຳວ່າ ເພື່ອໃຫ້ເປັນພັນລະຍາ ຄື ບອກວ່າ ທ່ານຈັກເປັນພັນລະຍາຂອງຜູ້ນັ້ນ

ຄຳວ່າ ເພື່ອໃຫ້ເປັນຊູ້ຮັກ ຄື ບອກວ່າ ທ່ານຈັກເປັນຊູ້ຮັກຜູ້ນັ້ນ

ຄຳວ່າ ໂດຍທີ່ສຸດແມ່ນເພື່ອໃຫ້ຢູ່ຮ່ວມກັນຊົ່ວຄາວ ຄື ບອກວ່າ ທ່ານຈັກເປັນພັນລະຍາຊົ່ວຄາວຂອງຜູ້ນັ້ນ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ໗ລ໗ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ "ເປັນສັງຄາທິເສດ"

## **ບົດພາຊະນີ**

## **ມາຕິກາ**

## **ແມ່ຍິງ ໑໐ ຈຳພວກ**

[໓໐໓] ແມ່ຍິງ ໑໐ ຈຳພວກ ຄື

໑. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ

໒. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ

໓. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາແລະບິດາ

໔. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ

໕. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍແລະນ້ອງສາວ

໖. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ

໗. ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ

໘. ແມ່ຍິງທີ່ມີທຳຄຸ້ມຄອງ

໙. ແມ່ຍິງທີ່ມີຄູ່ໝັ້ນ

໑໐. ແມ່ຍິງທີ່ມີກົດໝາຍຄຸ້ມຄອງ

## **ພັນລະຍາ ໑໐ ຈຳພວກ**

## **ພັນລະຍາ ໑໐ ຈຳພວກ ຄື**

໑. ພັນລະຍາສິນໄຖ່

໒. ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ

໓. ພັນລະຍາທີ່ຢູ່ຍ້ອນສົມບັດ

໔. ພັນລະຍາທີ່ຢູ່ຍ້ອນຜືນຜ້າ

໕. ພັນລະຍາທີ່ເຂົ້າພິທີສົມຣົດ

໖. ພັນລະຍາທີ່ຖືກປົງເຊີດ

໗. ພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ

໘. ພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ

໙. ພັນລະຍາທີ່ເປັນຊະເລີຍ

໑໐. ພັນລະຍາຊົ່ວຄາວ

[໓໐໔] ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ໄດ້ແກ່ ແມ່ຍິງທີ່ມີມານດາຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ໄດ້ແກ່ ແມ່ຍິງທີ່ມີບິດາຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາແລະບິດາ ໄດ້ແກ່ ແມ່ຍິງທີ່ມີມານດາແລະບິດາຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍແລະນ້ອງຊາຍ ໄດ້ແກ່ ແມ່ຍິງທີ່ມີອ້າຍແລະນ້ອງຊາຍຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍແລະນ້ອງສາວ ໄດ້ແກ່ ແມ່ຍິງທີ່ມີເອື້ອຍແລະນ້ອງສາວຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ໄດ້ແກ່ ແມ່ຍິງທີ່ມີຍາດຕິພີ່ນ້ອງຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ໄດ້ແກ່ ແມ່ຍິງທີ່ມີບຸກຄົນຮ່ວມຕະກູນຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ມີທຳຄຸ້ມຄອງ ໄດ້ແກ່ ແມ່ຍິງທີ່ມີຜູ້ປະພຶດທຳຮ່ວມກັນຄອຍລະວັງ ຄວບຄຸມ ຫ້າມ ໃຫ້ຢູ່ໃນອຳນາດ

ທີ່ຊື່ວ່າ ແມ່ຍິງທີ່ມີຄູ່ໝັ້ນ ໄດ້ແກ່ ແມ່ຍິງທີ່ຖືກໝັ້ນໝາຍໄວ້ຕັ້ງແຕ່ຢູ່ໃນທ້ອງໂດຍທີ່ສຸດແມ່ນແຕ່ແມ່ຍິງທີ່ຊາຍສວມພວງດອກໄມ້ໃຫ້ດ້ວຍກ່າວວ່າ "ແມ່ຍິງຜູ້ນີ້ເປັນຂອງເຮົາ"

ທີ່ຊື່ວ່າ ແມ່ຍິງທີ່ມີກົດໝາຍຄຸ້ມຄອງ ໄດ້ແກ່ ແມ່ຍິງທີ່ມີພຣະຣາຊາບາງອົງຊົງກຳນົດໂທດໄວ້ວ່າ "ຊາຍທີ່ລ່ວງເກີນແມ່ຍິງຄົນນີ້ ຕ້ອງໄດ້ຮັບໂທດເທົ່ານີ້"

ທີ່ຊື່ວ່າ ພັນລະຍາສິນໄຖ່ ໄດ້ແກ່ ແມ່ຍິງທີ່ຊາຍເອົາຊັບຊື້ມາໃຫ້ຢູ່ຮ່ວມກັນ

ທີ່ຊື່ວ່າ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ໄດ້ແກ່ ແມ່ຍິງອັນເປັນທີ່ຮັກເຊິ່ງຊາຍຄູ່ຮັກຮັບໃຫ້ຢູ່ຮ່ວມກັນ

ທີ່ຊື່ວ່າ ພັນລະຍາທີ່ຢູ່ຍ້ອນສົມບັດ ໄດ້ແກ່ແມ່ຍິງທີ່ຊາຍຍົກສົມບັດໃຫ້ແລ້ວຢູ່ຮ່ວມກັນ

ທີ່ຊື່ວ່າ ພັນລະຍາທີ່ຢູ່ຍ້ອນຜືນຜ້າ ໄດ້ແກ່ແມ່ຍິງທີ່ຊາຍມອບຜ້າໃຫ້ແລ້ວຢູ່ຮ່ວມກັນ

ທີ່ຊື່ວ່າ ພັນລະຍາທີ່ເຂົ້າພິທີສົມຣົດ ໄດ້ແກ່ ແມ່ຍິງທີ່ຊາຍຈັບມືຈຸ່ມລົງໃນພາຊະນະນ້ຳນຳກັນແລ້ວຢູ່ຮ່ວມກັນ

ທີ່ຊື່ວ່າ ພັນລະຍາທີ່ຖືກປົງເຊີດ ໄດ້ແກ່ ແມ່ຍິງທີ່ຊາຍຖອດເຊີດລົງແລ້ວຢູ່ຮ່ວມກັນ

ທີ່ຊື່ວ່າ ພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ໄດ້ແກ່ ແມ່ຍິງທີ່ເປັນທັງຂ້າທາດເປັນທັງພັນລະຍາ

ທີ່ຊື່ວ່າ ພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ໄດ້ແກ່ ແມ່ຍິງທີ່ເປັນທັງລູກຈ້າງເປັນທັງພັນລະຍາ

ທີ່ຊື່ວ່າ ພັນລະຍາທີ່ເປັນຊະເລີຍ ໄດ້ແກ່ ແມ່ຍິງທີ່ຖືກນຳມາເປັນຊະເລີຍ

ທີ່ຊື່ວ່າ ພັນລະຍາຊົ່ວຄາວ ໄດ້ແກ່ ແມ່ຍິງທີ່ຢູ່ຮ່ວມກັນບໍ່ດົນ

## ທະນັກກີຕາຈັກ

## ນິກເຂປະບົດ

[໓໐໘] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ຂໍໃຫ້ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້ເທີ້ນ" ພິກຂຸຮັບຄຳ ໄປບອກກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ບິດາ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ບອກແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ບອກແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້ເທີ້ນ" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ຂັນທະຈັກ

## ມີແມ່ຍິງຄົນໜຶ່ງເປັນເຫດ

[໓໐໙] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາວ່າ "ຈົ່ງຮັບຮູ້ວ່າທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມ

ປົກຄອງຂອງເອື້ອຍນ້ອງສາວ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄອງຂອງຕະກູນ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດ ສັງຄາທິເສດ

**ຂັນທະຈັກ ຈົບ**

## ພັດທະຈັກ
## ມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໑

[๓๐๗] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ฯลฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດ ສັງຄາທິເສດ

**ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໑ ຈົບ**

## ພັດທະຈັກ ມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໔

[໓໐໗] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມຄຸ້ມຄອງຂອງຕະກູນ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໓

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍແລະແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໔

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໕

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໖

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນແລະແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ฯລฯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໖ ຈົບ**

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໗

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ฯລฯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໗ ຈົບ**

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໗

ຊາຍຂໍຮ້ອງພິກຂຸວ່າ “ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງວ່າ “ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້” ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໗ ຈົບ

## ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໘

ຊາຍຂໍຮ້ອງພິກຂຸວ່າ “ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນວ່າ “ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້” ພິກຂຸຮັບຄຳໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໘ ຈົບ

### ຂັນທະຈັກແລະພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນ ຈົບ

ຂັນທະຈັກ ແລະ ພັດທະຈັກທີ່ມີແມ່ຍິງ ໔ ຄົນເປັນມູນກໍດີ ມີແມ່ຍິງ ໓ ຄົນເປັນມູນກໍດີ ມີແມ່ຍິງ ໔ ຄົນເປັນມູນກໍດີ ມີແມ່ຍິງ ໕ ຄົນເປັນມູນກໍດີ ມີແມ່ຍິງ ໖ ຄົນເປັນມູນກໍດີ ມີແມ່ຍິງ ໗ ຄົນເປັນມູນກໍດີ ມີແມ່ຍິງ ໘ ຄົນເປັນມູນກໍດີ ມີແມ່ຍິງ ໙ ຄົນເປັນມູນກໍດີ ກໍເພິ່ງຂະຫຍາຍຕາມແບບນີ້ໃຫ້ຄືກັນ

ຕໍ່ໄປນີ້ ຄື ຂັນທະຈັກແລະພັດທະຈັກທີ່ມີແມ່ຍິງ ໑໐ ຄົນເປັນມູນ

## ທະນັກກິຕາຈັກ

## ພັດທະຈັກມີແມ່ຍິງ ໑໐ ຄົນເປັນມູນ

[໓໐໙] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ທະນັກກິຕາຈັກ ຈົບ

## ສັນທະວາສິນິຈັກ - ມຸຫຸດຕິກາຈັກ

## ນິກເຂປະບົດ

[໓໑໐] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈຂອງຊາຍຊື່ນີ້ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນສິນບັດ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາທີ່ຖືກປົງເຊີດ ຯລຯ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນ

ຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ມຸຫຸດຕິກາຈັກ

## ຂັນທະຈັກທີ່ມີແມ່ຍິງຄົນໜຶ່ງເປັນມູນ

[៣១១] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ຂັນທະຈັກທີ່ມີແມ່ຍິງຄົນໜຶ່ງເປັນມູນ ຈົບ**

## ມຸທຸດຕິກາຈັກ

## ພັດທະຈັກທີ່ມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໑

[໓໑໘] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາວ່າ "ຈົ່ງຮັບຮູ້ວ່າທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ພັດທະຈັກມີແມ່ຍິງຄົນໜຶ່ງເປັນມູນໝວດທີ ໔ - ໗ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີແມ່ຍິງຄົນໜຶ່ງເປັນມູນ ໝວດທີ ໙

[໓໑໙] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍ ຯລຯ ແມ່ຍິງ ຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍ ຯລຯ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະ

ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ໆລໆ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ໆລໆ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງແລະແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ໆລໆ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງ ແລະ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນວ່າ "ຈົ່ງຮັບຮູ້ວ່າທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ຂັນທະຈັກແລະພັດທະຈັກແຫ່ງມຸທຸດຕິກາຈັກທີ່ມີແມ່ຍິງຄົນໜຶ່ງເປັນມູນ ຈົບ

ຂັນທະຈັກ ແລະພັດທະຈັກແຫ່ງມຸທຸດຕິກາຈັກທີ່ມີແມ່ຍິງ ໒ ຄົນເປັນມູນກໍດີ ມີແມ່ຍິງ ໓ ຄົນເປັນມູນກໍດີ ມີແມ່ຍິງ ໔ ຄົນເປັນມູນກໍດີ ມີແມ່ຍິງ ໕ ຄົນເປັນມູນກໍດີ ມີແມ່ຍິງ ໖ ຄົນເປັນມູນກໍດີ ມີແມ່ຍິງ ໗ ຄົນເປັນມູນກໍດີ ມີແມ່ຍິງ ໘ ຄົນເປັນມູນກໍດີ ມີແມ່ຍິງ ໙ ຄົນເປັນມູນກໍດີ ກໍເພິ່ງຂະຫຍາຍຕາມແບບນີ້ຄືກັນ

ຕໍ່ໄປນີ້ຄືພັດທະຈັກທີ່ມີແມ່ຍິງ ໑໐ ຄົນເປັນມູນ

## ມຸທຸດຕິກາຈັກ

## ພັດທະຈັກທີ່ມີແມ່ຍິງ ໑໐ ຄົນເປັນມູນ

[៣១៤] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ມຸທຸດຕິກາຈັກ ຈົບ

## ມາຕຸຣັກຂິຕາຈັກ

## ນິກເຂປະບົດ

[៣១៥] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈຂອງຊາຍຊື່ນີ້ ໆລໆ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ໆລໆ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ໆລໆ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ໆລໆ ເປັນພັນລະຍາທີ່ຖືກປົ້ງເຊີດ ໆລໆ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ໆລໆ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ໆລໆ ເປັນພັນລະຍາທີ່ເປັນຊະເລີຍ ໆລໆ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ມາຕຸຣັກຂິຕາຈັກ

## ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ

[໓໑໖] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ຍ້ອນຜືນຜ້າຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ໆລໆ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ໆລໆ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ໆລໆ ເປັນພັນລະຍາທີ່ຖືກປົ້ງເຊີດ ໆລໆ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ໆລໆ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ໆລໆ ເປັນພັນລະຍາທີ່ເປັນຊະເລີຍ ໆລໆ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ຂັນທະຈັກ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑

[໓໑໗] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ໆລໆ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາຊົ່ວຄາວ ໆລໆ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑ ຈົບ**

ພັດທະຈັກ ມີພັນລະຍາຄົນໜຶ່ງເປັນມູນໝວດທີ ໔ - ໗ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ๙

[๓๑๗] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາຊົ່ວຄາວ ແລະ ເປັນພັນລະຍາສິນໄຖ່ ຯລຯ ເປັນພັນລະຍາຊົ່ວຄາວ ແລະ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາຊົ່ວຄາວແລະເປັນພັນລະຍາທີ່ເປັນຊະເລີຍຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ຂັນທະຈັກແລະພັດທະຈັກແຫ່ງມາຕຸຣັກຂິຕາຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ຈົບ

ຂັນທະຈັກ ແລະພັດທະຈັກແຫ່ງມາຕຸຣັກຂິຕາຈັກທີ່ມີພັນລະຍາ ๒ ຄົນເປັນມູນກໍດີ ມີພັນລະຍາ ๓ ຄົນເປັນມູນກໍດີ ມີພັນລະຍາ ๔ ຄົນເປັນມູນກໍດີ ມີພັນລະຍາ ๕ ຄົນເປັນມູນກໍດີ ມີພັນລະຍາ ๖ ຄົນເປັນມູນກໍດີ ມີພັນລະຍາ ๗ ຄົນເປັນມູນກໍດີ ມີພັນລະຍາ ๘ ຄົນເປັນມູນກໍດີ ມີພັນລະຍາ ๙ ຄົນເປັນມູນກໍດີ ກໍເພິ່ງຂະຫຍາຍຕາມແບບນີ້ຄືກັນ

ຕໍ່ໄປນີ້ຄືພັດທະຈັກທີ່ມີພັນລະຍາ ๑໐ ຄົນເປັນມູນ

## ພັດທະຈັກທີ່ມີພັນລະຍາ ๑໐ ຄົນເປັນມູນ

[๓๑๙] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ ເປັນທັງພັນລະຍາ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ມາຕຸຣັກຂິຕາຈັກ ຈົບ

## ປິຕຸຣັກຂິຕາຈັກ

## ນິກເຂປະບົດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ຯລຯ ບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ຯລຯ ບອກແມ່ຍິງຊື່ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ຯລຯ ບອກແມ່ຍິງຊື່ນີ້

ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ຯລຯ ບອກແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ຯລຯ ບອກແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ຯລຯ ບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາທີ່ຖືກປົງເຊີດ ຯລຯ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ສະປະຣິທັນທາຈັກ
## ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ

[໓໔໐] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ ແລະ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍຂໍຮ້ອງພິກຂຸວ່າ "ຄູບາທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາສິນໄຖ່ແລະ ພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຖືກປົງເຊີດ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາສິນໄຖ່ແລະພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາສິນໄຖ່ ແລະພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ຂັນທະຈັກ ມີພັນລະຍາຄົນໜຶ່ງເປັນມູນ ຈົບ**

## ສະປະຣິທັນທາຈັກ
## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ

ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາຊົ່ວຄາວ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑ ຈົບ**

ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນໝວດທີ ໒ - ໙ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑໐

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າທ່ານຈົ່ງເປັນພັນລະຍາຊົ່ວຄາວ ແລະ ພັນລະຍາສິນໄຖ່ ຯລຯ ເປັນພັນລະຍາຊົ່ວຄາວ ແລະ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາຊົ່ວຄາວ ແລະ ພັນລະຍາທີ່ເປັນຊະເລີຍຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ຂັນທະຈັກແລະພັດທະຈັກແຫ່ງສະປະຣິທັນທາຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ຈົບ**

ຂັນທະຈັກ ແລະ ພັດທະຈັກແຫ່ງສະປະຣິທັນທາຈັກທີ່ມີພັນລະຍາ ໒ ຄົນເປັນມູນກໍດີ ມີພັນລະຍາ ๓ ຄົນເປັນມູນກໍດີ ມີພັນລະຍາ ໔ ຄົນເປັນມູນກໍດີ ມີພັນລະຍາ ໕ ຄົນເປັນມູນກໍດີ ມີພັນລະຍາ ໖ ຄົນເປັນມູນກໍດີ ມີພັນລະຍາ ໗ ຄົນເປັນມູນກໍດີ ມີພັນລະຍາ ໘ ຄົນເປັນມູນກໍດີ ມີພັນລະຍາ ໙ ຄົນເປັນມູນກໍດີ ກໍເພິ່ງຂະຫຍາຍຕາມແບບນີ້

## ຕໍ່ໄປນີ້ຄືພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

## ພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

[๓໒໑] ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ແລະພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ສະປະຣິຖັນທາຈັກ ຈົບ**

## ອຸພະໂຕພັດທະກະຈັກ

### ມີແມ່ຍິງແລະພັນລະຍາລວມກັນຂ້າງລະ ๑

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາວ່າ "ຈົ່ງຮັບຮູ້ວ່າ ທ່ານຈົ່ງເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກກັບມາບອກ ຕ້ອງອາບັດສັງຄາທິເສດ

### ມີແມ່ຍິງແລະພັນລະຍາລວມກັນຂ້າງລະ ໒

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາແລະແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກກັບມາບອກ ຕ້ອງອາບັດສັງຄາທິເສດ

### ມີແມ່ຍິງແລະພັນລະຍາລວມກັນຂ້າງລະ ໓

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແລະ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະພັນລະຍາທີ່ຢູ່ຍ້ອນສິນບັດຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກກັບມາບອກ ຕ້ອງອາບັດສັງຄາທິເສດ

ອຸພະໂຕພັດທະກະຈັກ ເພິ່ງຂະຫຍາຍຕາມແບບນີ້

ຕໍ່ໄປນີ້ເປັນສັບພະມູລະກະໄນ

## ອຸພະໂຕພັດທະກະຈັກ

### ມີແມ່ຍິງແລະພັນລະຍາລວມກັນຂ້າງລະ ໑໐

ຊາຍຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງບິດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຍາດ ແມ່ຍິງຊື່ນີ້ທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນ ແມ່ຍິງຊື່ນີ້ທີ່ມີທຳຄຸ້ມຄອງ ແມ່ຍິງຊື່ນີ້ທີ່ມີຄູ່ໝັ້ນ ແມ່ຍິງຊື່ນີ້ທີ່ມີກົດໝາຍຄຸ້ມຄອງວ່າ "ຈົ່ງຮັບຮູ້ວ່າ ທ່ານທັງຫຼາຍຈົ່ງເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່

ດ້ວຍຄວາມພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ອຸພະໂຕພັດທະກະຈັກ ຈົບ**

## ປຸຣິສະເປີຍຍາລະ

ມານດາຂອງຊາຍຂໍຮ້ອງພິກຂຸ ຯລຯ ບິດາຂອງຊາຍຂໍຮ້ອງພິກຂຸ ຯລຯ ມານດາບິດາຂອງຊາຍຂໍຮ້ອງພິກຂຸ ຯລຯ ອ້າຍນ້ອງຊາຍຂອງຊາຍຂໍຮ້ອງພິກຂຸ ຯລຯ ເອື້ອຍນ້ອງສາວຂອງຊາຍຂໍຮ້ອງພິກຂຸ ຯລຯ ພວກຍາດຕິພີ່ນ້ອງຂອງຊາຍຂໍຮ້ອງພິກຂຸ ຯລຯ ຕະກູນຂອງຊາຍຂໍຮ້ອງພິກຂຸ ຯລຯ ຜູ້ຮ່ວມປະພຶດທຳຂອງຊາຍຂໍຮ້ອງພິກຂຸ ຯລຯ

ປຸຣິສະເປີຍຍາລະເພິ່ງຂະຫຍາຍໃຫ້ພິສະດານ

ອຸພະໂຕພັດທະກະຈັກເພິ່ງຂະຫຍາຍໃຫ້ພິສະດານເໝືອນໄນທີ່ມີມາຂ້າງຕົ້ນນັ້ນແລ

**ປຸຣິສະເປີຍຍາລະ ຈົບ**

## ອິດຖີເປີຍຍາລະ

## ນິກເຂປະບົດ

[໓໒໘] ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາທີ່ຖືກປົງເຊີດ ຯລຯ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

# ມາຕຸຣັກຂິຕາຈັກ

## ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ

[໓໔໓] ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາສິນໄຖ່ແລະພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຖືກປຶງເຊີດ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ຈົບ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑

[໓໔໔] ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາຊົ່ວຄາວ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑ ຈົບ

ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນໝວດທີ ໔ - ໙ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໙

[໓໔໕] ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາຊົ່ວຄາວ ແລະ ເປັນພັນລະຍາສິນໄຖ່

ຯລຯ ເປັນພັນລະຍາຊົ່ວຄາວ ແລະ ພັນລະຍາທີ່ເປັນຊະເລີຍຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປ ບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ຂັນທະຈັກແລະພັດທະຈັກແຫ່ງມາຕຸຣັກຂິຕາຈັກມີພັນລະຍາຄົນໜຶ່ງເປັນມູນ ຈົບ**

ແມ່ນຂັນທະຈັກ ແລະ ພັດທະຈັກແຫ່ງມາຕຸຣັກຂິຕາຈັກທີ່ມີພັນລະຍາ ໘ ຄົນເປັນມູນ ຕະຫຼອດເຖິງຂັນທະຈັກ ແລະ ພັດທະຈັກແຫ່ງມາຕຸຣັກຂິຕາຈັກທີ່ມີພັນລະຍາ ໙ ຄົນເປັນມູນກໍ ເພິ່ງຂະຫຍາຍຕາມແບບນີ້

ຕໍ່ໄປນີ້ຄືພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

## ພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

[໓໘໙] ມານດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມ ພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີ ສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ເປັນ ພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ແລະເປັນພັນລະ ຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດ ສັງຄາທິເສດ

**ມາຕຸຣັກຂິຕາຈັກ ຈົບ**

## ປິຕຸຣັກຂິຕາຈັກ - ສະປະຣິທັນທາຈັກ
## ນິເຂປະບົດ

ບິດາຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງບິດາຂໍຮ້ອງພິກຂຸ ຯລຯ ມານດາບິດາ ຂອງແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາຂໍຮ້ອງພິກຂຸ ຯລຯ ອ້າຍນ້ອງຊາຍຂອງ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍຂໍຮ້ອງພິກຂຸ ຯລຯ ເອື້ອຍນ້ອງສາວຂອງ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວຂໍຮ້ອງພິກຂຸ ຯລຯ ຍາດຂອງແມ່ຍິງທີ່ຍັງຢູ່ ໃນຄວາມປົກຄອງຂອງຍາດຕິພີ່ນ້ອງຂໍຮ້ອງພິກຂຸ ຯລຯ ຕະກູນຂອງແມ່ຍິງທີ່ຍັງຢູ່ໃນຄວາມ ປົກຄອງຂອງຕະກູນຂໍຮ້ອງພິກຂຸ ຯລຯ ຜູ້ຮ່ວມປະພຶດທຳຂອງແມ່ຍິງທີ່ມີທຳຄຸ້ມຄອງຂໍຮ້ອງພິກຂຸ ຯລຯ ຄູ່ໝັ້ນຂອງແມ່ຍິງທີ່ມີຄູ່ໝັ້ນຂໍຮ້ອງພິກຂຸ ຯລຯ ພຣະຣາຊາ ຜູ້ກາກົດໝາຍສຳລັບແມ່ຍິງທີ່ ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນ ລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ສະປະຣິທັນທາຈັກ

## ນິກເຂປະບົດ

ພຣະຣາຊາຜູ້ກາກົດໝາຍສຳລັບແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ “ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາທີ່ຖືກປົງເຊີດ ຯລຯ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້” ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ

[໓໘໗] ພຣະຣາຊາຜູ້ກາກົດໝາຍສຳລັບແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ “ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້” ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑

[໓໘໘] ພຣະຣາຊາຜູ້ກາກົດໝາຍສຳລັບແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ “ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາຊົ່ວຄາວ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາສິນໄຖ່ຂອງຊາຍຊື່ນີ້” ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນໝວດທີ ໑ ຈົບ**

ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນໝວດທີ ໒ - ໘ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໙

[໓໘໙] ພຣະຣາຊາຜູ້ກາກົດໝາຍສຳລັບແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ “ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາຊົ່ວຄາວ ແລະ ເປັນພັນລະຍາ

ສິນໄຖ່ ຯລຯ ເປັນພັນລະຍາຊົ່ວຄາວ ແລະ ພັນລະຍາທີ່ເປັນຊະເລີຍຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ພັດທະຈັກທີ່ມີພັນລະຍາໜຶ່ງຄົນເປັນມູນ ຈົບ**

ແມ່ນຂັນທະຈັກ ແລະ ພັດທະຈັກແຫ່ງສະປະຣິທັນທາຈັກທີ່ມີພັນລະຍາ ໘ ຄົນເປັນມູນ ຕະຫຼອດເຖິງຂັນທະຈັກ ແລະ ພັດທະຈັກແຫ່ງສະປະຣິທັນທາຈັກທີ່ມີພັນລະຍາ ໙ ຄົນເປັນມູນກໍເພິ່ງຂະຫຍາຍຕາມແບບນີ້

ຕໍ່ໄປນີ້ຄືພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

## ພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

[๓๓๐] ພຣະຣາຊາຜູ້ກາກົດໝາຍສໍາລັບແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ແມ່ຍິງນັ້ນຂໍເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ແລະເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ທັນທະຖະປິຕະຈັກ ຈົບ**

## ມາຕຸຣັກຂິຕາຈັກ

## ນິກເຂປະບົດ

ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາຖືກປົງເຊີດ ຯລຯ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄໍາ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

**ນິກເຂປະບົດ ຈົບ**

## ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ

[໓໓໑] ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑

[໓໓໔] ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈແລະພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈແລະພັນລະຍາຊົ່ວຄາວ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑ ຈົບ

ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໔ - ໙ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑໐

ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາຊົ່ວຄາວ ແລະ ເປັນພັນລະຍາສິນໄຖ່ ຯລຯ ເປັນພັນລະຍາຊົ່ວຄາວ ແລະ ພັນລະຍາທີ່ເປັນຊະເລີຍຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ຂັນທະຈັກແລະພັດທະຈັກແຫ່ງມາຕຸຣັກຂິຕາຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ຈົບ

ຂັນທະຈັກແລະພັດທະຈັກແຫ່ງມາຕຸຣັກຂິຕາຈັກທີ່ມີພັນລະຍາ ໔ ຄົນເປັນມູນເປັນຕົ້ນ ກໍເພິ່ງຂະຫຍາຍຕາມແບບນີ້

ຕໍ່ໄປນີ້ຄືພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

## ພັດທະຈັກທີ່ມີພັນລະຍາ ໑໐ ຄົນ ເປັນມູນ

[໓໓໓] ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ມາຕຸຣັກຂິຕາຈັກອີກໄນໜຶ່ງ ຈົບ

## ນິກເຂປະບົດ

ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງບິດາຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງມານດາບິດາຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງອ້າຍນ້ອງຊາຍຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງເອື້ອຍນ້ອງສາວຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງຍາດຕິພີ່ນ້ອງຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ຍັງຢູ່ໃນຄວາມປົກຄອງຂອງຕະກູນຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ມີທຳຄຸ້ມຄອງຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ມີຄູ່ໝັ້ນຂໍຮ້ອງພິກຂຸ ຯລຯ ແມ່ຍິງທີ່ມີກົດ ໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ຯລຯ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ຯລຯ ເປັນພັນລະຍາທີ່ຖືກປົງເຊີດ ຯລຯ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນທັງລູກຈ້າງ ເປັນທັງພັນລະຍາ ຯລຯ ເປັນພັນລະຍາທີ່ເປັນຊະເລີຍ ຯລຯ ເປັນພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ສະປະຣິທັນທາຈັກ
## ຂັນທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ

[໓໓໔] ແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ ແລະ ພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ຯລຯ ເປັນພັນລະຍາສິນໄຖ່ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑

[๓๓๕] ແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາທີ່ຢູ່ຍ້ອນສົມບັດ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ແລະ ພັນລະຍາຊົ່ວຄາວ ຯລຯ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈແລະພັນລະຍາສິນໄຖ່ຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໑ ຈົບ

ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໒ - ໙ ຫຍໍ້ໄວ້ແລ້ວ

## ພັດທະຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ໝວດທີ ໙

[๓๓๖] ແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາຊົ່ວຄາວ ແລະ ພັນລະຍາສິນໄຖ່ ຯລຯ ເປັນພັນລະຍາຊົ່ວຄາວແລະພັນລະຍາທີ່ເປັນຊະເລີຍຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ຂັນທະຈັກແລະພັດທະຈັກແຫ່ງສະປະຣິທັນທາຈັກທີ່ມີພັນລະຍາຄົນໜຶ່ງເປັນມູນ ຈົບ

ຂັນທະຈັກແລະພັດທະຈັກແຫ່ງສະປະຣິທັນທາຈັກທີ່ມີພັນລະຍາ ໒ ຄົນເປັນມູນເປັນຕົ້ນກໍເພິ່ງຂະຫຍາຍຕາມແບບນີ້

ຕໍ່ໄປນີ້ຄືພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

## ພັດທະຈັກທີ່ມີພັນລະຍາ ໑໐ ຄົນເປັນມູນ

[๓๓๗] ແມ່ຍິງທີ່ມີກົດໝາຍຄຸ້ມຄອງຂໍຮ້ອງພິກຂຸວ່າ "ຄູບາ ທ່ານຊ່ອຍໄປບອກຊາຍຊື່ນີ້ວ່າ ຂ້ານ້ອຍຂໍເປັນພັນລະຍາສິນໄຖ່ ເປັນພັນລະຍາທີ່ຢູ່ດ້ວຍຄວາມພໍໃຈ ເປັນພັນລະຍາທີ່ຢູ່ຍ້ອນສົມບັດ ເປັນພັນລະຍາທີ່ຢູ່ຍ້ອນຜືນຜ້າ ເປັນພັນລະຍາທີ່ເຂົ້າພິທີສົມຣົດ ເປັນພັນລະຍາທີ່ຖືກປົງເຊີດ ເປັນພັນລະຍາທີ່ເປັນທັງຄົນຮັບໃຊ້ເປັນທັງພັນລະຍາ ເປັນພັນລະຍາທີ່ເປັນທັງລູກຈ້າງເປັນທັງພັນລະຍາ ເປັນພັນລະຍາທີ່ເປັນຊະເລີຍ ແລະ ພັນລະຍາຊົ່ວຄາວຂອງຊາຍຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

### ສະປະຣິທັນທາຈັກອີກໄນໜຶ່ງ ຈົບ

### ຈັກເປີຍຍາລະທັງມວນ ຈົບ

## ພິກຂຸຮັບຄຳ

| | | | | |
|---|---|---|---|---|
| [໓໓໗] | ພິກຂຸຮັບຄຳ | ໄປບອກ | ກັບມາບອກ | ຕ້ອງອາບັດສັງຄາທິເສດ |
| | ພິກຂຸຮັບຄຳ | ໄປບອກ | ບໍ່ກັບມາບອກ | ຕ້ອງອາບັດຖຸນລັດໄຈ |
| | ພິກຂຸຮັບຄຳ | ບໍ່ໄປບອກ | ກັບມາບອກ | ຕ້ອງອາບັດຖຸນລັດໄຈ |
| | ພິກຂຸຮັບຄຳ | ບໍ່ໄປບອກ | ບໍ່ກັບມາບອກ | ຕ້ອງອາບັດທຸກກົດ |
| | ພິກຂຸບໍ່ຮັບຄຳ | ໄປບອກ | ກັບມາບອກ | ຕ້ອງອາບັດຖຸນລັດໄຈ |
| | ພິກຂຸບໍ່ຮັບຄຳ | ໄປບອກ | ບໍ່ກັບມາບອກ | ຕ້ອງອາບັດທຸກກົດ |
| | ພິກຂຸບໍ່ຮັບຄຳ | ບໍ່ໄປບອກ | ກັບມາບອກ | ຕ້ອງອາບັດທຸກກົດ |
| | ພິກຂຸບໍ່ຮັບຄຳ | ບໍ່ໄປບອກ | ບໍ່ກັບມາບອກ | ບໍ່ຕ້ອງອາບັດ |

## ຊາຍສັ່ງພິກຂຸຫຼາຍອົງ

ຊາຍສັ່ງພິກຂຸຫຼາຍອົງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸທຸກອົງຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດທຸກອົງ

ຊາຍສັ່ງພິກຂຸຫຼາຍອົງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸທຸກອົງຮັບຄຳ ໄປບອກ ໃຫ້ອົງໜຶ່ງກັບມາບອກ ຕ້ອງອາບັດສັງຄາທິເສດທຸກອົງ

ຊາຍສັ່ງພິກຂຸຫຼາຍອົງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸທຸກອົງຮັບຄຳ ໃຫ້ອົງ ໜຶ່ງໄປບອກ ແລ້ວທຸກອົງກັບມາບອກ ຕ້ອງອາບັດສັງຄາທິເສດທຸກອົງ

ຊາຍສັ່ງພິກຂຸຫຼາຍອົງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸທຸກອົງຮັບຄຳ ໃຫ້ອົງ ໜຶ່ງໄປບອກ ແລ້ວໃຫ້ອົງໜຶ່ງກັບມາບອກ ຕ້ອງອາບັດສັງຄາທິເສດທຸກອົງ

## ຊາຍສັ່ງພິກຂຸອົງດຽວ

ຊາຍສັ່ງພິກຂຸອົງດຽວວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍສັ່ງພິກຂຸອົງດຽວວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸຮັບຄຳ ໄປບອກ ແຕ່ໃຫ້ພິກຂຸອັນເຕວາສິກກັບມາບອກ ຕ້ອງອາບັດສັງຄາທິເສດ

ຊາຍສັ່ງພິກຂຸອົງດຽວວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸຮັບຄຳໃຫ້ພິກຂຸອັນເຕວາສິກໄປບອກ ແຕ່ກັບມາບອກດ້ວຍຕົນເອງ ຕ້ອງອາບັດສັງຄາທິເສດ

ຊາຍສັ່ງພິກຂຸອົງດຽວວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸຮັບຄຳ ໃຫ້ພິກຂຸອັນເຕວາສິກໄປບອກ ພິກຂຸອັນເຕວາສິກໄປບອກແລ້ວກັບມາບອກນອກເລື້ອງ ຕ້ອງອາບັດຖຸນລັດໄຈທັງສອງອົງ

## ພິກຂຸຈັດການສຳເລັດແລະບອກຄາດເຄື່ອນ

[๓๓๗] ພິກຂຸໄປຈັດການສຳເລັດ ກັບມາບອກຄາດເຄື່ອນ ຕ້ອງອາບັດຖຸນລັດໄຈ
ພິກຂຸໄປບອກຄາດເຄື່ອນ ກັບມາບອກ ຈັດການສຳເລັດ ຕ້ອງອາບັດຖຸນລັດໄຈ
ພິກຂຸໄປຈັດການສຳເລັດ ກັບມາບອກ ຈັດການສຳເລັດຕ້ອງອາບັດສັງຄາທິເສດ
ພິກຂຸໄປບອກຄາດເຄື່ອນ ກັບມາບອກຄາດເຄື່ອນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[๓๘๐] ໑. ພິກຂຸຜູ້ໄປດ້ວຍກິດຂອງສົງ ຂອງເຈດີ ຫຼື ຂອງພິກຂຸອາພາດ
๒. ພິກຂຸວິກົນຈະລິດ
๓. ພິກຂຸຕົ້ນບັນຍັດ

## ຄາຖາລວມວິນີຕະວັດຖຸ

## ເລື້ອງທີຊົງວິນິດໄສແລ້ວ

ເລື້ອງແມ່ຍິງຫຼັບ ໑ ເລື້ອງ
ເລື້ອງແມ່ຍິງຕາຍ ໑ ເລື້ອງ
ເລື້ອງແມ່ຍິງຍ້າຍບ້ານ ໑ ເລື້ອງ
ເລື້ອງບໍ່ແມ່ນແມ່ຍິງ ໑ ເລື້ອງ
ເລື້ອງແມ່ຍິງບັນເດາະ ໑ ເລື້ອງ
ເລື້ອງໄກ່ເກ່ຍຜົວເມຍຜູ້ຜິດຖຽງໃຫ້ຄືນດີກັນ ໑ ເລື້ອງ
ເລື້ອງການເປັນສີ່ບັນເດາະ ໑ ເລື້ອງ

## ວິນີຕະວັດຖຸ

## ເລື້ອງແມ່ຍິງຫຼັບ ໑ ເລື້ອງ

[๓๘๑] ສະໄໝນັ້ນ ຊາຍຄົນໜຶ່ງສັ່ງພິກຂຸອົງໜຶ່ງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸໄປຖາມພວກຊາວບ້ານວ່າ "ແມ່ຍິງຄົນຊື່ນີ້ ຢູ່ໃສ" "ຫຼັບຢູ່ ຂ້ານ້ອຍ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໑)

## ເລື້ອງແມ່ຍິງຕາຍ ໑ ເລື້ອງ

ສະໄໝນັ້ນ ຊາຍຄົນໜຶ່ງສັ່ງພິກຂຸອົງໜຶ່ງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸນັ້ນໄປຖາມພວກຊາວບ້ານວ່າ "ແມ່ຍິງຄົນຊື່ນີ້ຢູ່ໃສ" ພວກເຂົາຕອບວ່າ "ນາງຕາຍແລ້ວ ຂ້ານ້ອຍ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໒)

## ເລື້ອງແມ່ຍິງຍ້າຍບ້ານ ໑ ເລື້ອງ

ສະໄໝນັ້ນ ຊາຍຄົນໜຶ່ງສັ່ງພິກຂຸອົງໜຶ່ງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸນັ້ນໄປຖາມພວກຊາວບ້ານວ່າ "ແມ່ຍິງຄົນຊື່ນີ້ ຢູ່ໃສ" ພວກເຂົາຕອບວ່າ "ນາງຍ້າຍໄປແລ້ວ ຂ້ານ້ອຍ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໓)

## ເລື້ອງບໍ່ແມ່ນແມ່ຍິງ ໑ ເລື້ອງ

ສະໄໝນັ້ນ ຊາຍຄົນໜຶ່ງສັ່ງພິກຂຸອົງໜຶ່ງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸນັ້ນໄປຖາມພວກຊາວບ້ານວ່າ "ແມ່ຍິງຄົນຊື່ນີ້ ຢູ່ໃສ" ພວກເຂົາຕອບວ່າ "ບໍ່ແມ່ນຜູ້ຍິງ ຂ້ານ້ອຍ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໔)

## ເລື້ອງແມ່ຍິງບັນເດາະ ໑ ເລື້ອງ

ສະໄໝນັ້ນ ຊາຍຄົນໜຶ່ງສັ່ງພິກຂຸອົງໜຶ່ງວ່າ "ຄູບາ ທ່ານຊ່ອຍໄປບອກແມ່ຍິງຊື່ນີ້" ພິກຂຸນັ້ນໄປຖາມພວກຊາວບ້ານວ່າ "ແມ່ຍິງຄົນຊື່ນີ້ ຢູ່ໃສ" ພວກເຂົາຕອບວ່າ "ເປັນແມ່ຍິງບັນເດາະ ຂ້ານ້ອຍ" ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດທຸກກົດ" (ເລື້ອງທີ ໕ )

## ເລື້ອງໄກ່ເກ່ຍຜົວເມຍຜູ້ຜິດຖຽງໃຫ້ຄືນດີກັນ ໑ ເລື້ອງ

ສະໄໝນັ້ນ ແມ່ຍິງຄົນໜຶ່ງຜິດຖຽງກັບສາມີຍ່າງໄປບ້ານມານດາ ພິກຂຸທີ່ໃກ້ຊິດຕະກູນ

เວົ້າໄກ່ເກ່ຍໃຫ້ກັບຄືນດີກັນ ແລ້ວທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດ ແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດຖາມວ່າ "ພິກຂຸ ເຂົາປະກັນແລ້ວບໍ?" "ຍັງບໍ່ປະກັນ ຂ້ານ້ອຍ" "ພິກຂຸ ທ່ານບໍ່ຕ້ອງອາບັດ ຍ້ອນເຂົາຍັງບໍ່ປະກັນ" (ເລື້ອງທີ ໖)

## ເລື້ອງການເປັນສື່ບັນເດາະ ໑ ເລື້ອງ

ສະໄໝນັ້ນ ພິກຂຸອົງໜຶ່ງເຮັດໜ້າທີ່ເປັນສື່ໃຫ້ພວກບັນເດາະ ທ່ານເກີດຄວາມກັງວົນໃຈວ່າ ເຮົາຕ້ອງອາບັດສັງຄາທິເສດແລ້ວບໍ່ນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຕັດວ່າ "ພິກຂຸ ທ່ານບໍ່ຕ້ອງອາບັດສັງຄາທິເສດ ແຕ່ຕ້ອງອາບັດຖຸນລັດໄຈ" (ເລື້ອງທີ ໗)

**ສັນຈະຣິດຕະສິກຂາບົດທີ ໕ ຈົບ**

# ໖. ກຸຕິການະສິກຂາບົດ

## ວ່າດ້ວຍການກໍ່ສ້າງກຸຕິ

### ເລື້ອງພິກຂຸຊາວເມືອງອາລະວີ

[໓໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄືຶ ຄັ້ງນັ້ນ ພວກພິກຂຸຊາວເມືອງອາລະວີສ້າງກຸຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງ ບໍ່ມີເຈົ້າຂອງສ້າງໃຫ້ ສ້າງເປັນຂອງສ່ວນຕົວ ບໍ່ຈຳກັດຂະໜາດ ກຸຕິສ້າງບໍ່ສຳເລັດ ພວກທ່ານກໍເປັນຜູ້ຫຼາຍໄປດ້ວຍການຂໍ ຫຼາຍໄປດ້ວຍການອອກປາກຂໍ ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງໃຫ້ຄົນງານ ອຸປະກອນກໍ່ສ້າງ ງົວ ກວຽນ ພ້າ ຂວານ ຂວານຖາກ ຈົກ ສິ່ວ ເຄືອເຂົາ ໄມ້ໄຜ່ ຫຍ້າມຸງກະຕ່າຍ ຫຍ້າແຝກ ຫຍ້າສາມັນ ດິນໜຽວ"

ພວກຊາວບ້ານຖືກລົບກວນດ້ວຍການຂໍ ດ້ວຍການອອກປາກຂໍ ພົບເຫັນພິກຂຸທັງຫຼາຍຕ່າງພາກັນຫວາດສະດຸ້ງຢ້ານແດ່ ຫຼົບໜີໄປທີ່ອື່ນແດ່ ຍ່າງປົບໄປທາງອື່ນແດ່ ເມີນໜ້າໜີແດ່ ປິດປະຕູເຮືອນໃສ່ແດ່ ພົບເຫັນແມ່ງົວເຂົ້າກໍແລ່ນໜີຍ້ອນເຂົ້າໃຈວ່າເປັນພິກຂຸແດ່

ຄັ້ງນັ້ນ ທ່ານພຣະມະຫາກັດສະປະຈຳພັນສາໃນເຂດນະຄອນຣາຊະຄືຶ ອອກເດີນທາງໄປທາງເມືອງອາລະວີ ຈາຣິກໄປໂດຍລຳດັບ ຈົນເຖິງເມືອງອາລະວີ ໄດ້ຂ່າວວ່າທ່ານພຣະມະຫາກັດສະປະພັກຢູ່ ໃນອັກຄາລະວະເຈດີ ເຂດເມືອງອາລະວີນັ້ນ ເມື່ອເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນໄປບິນທະບາດໃນເມືອງອາລະວີ ພວກຊາວບ້ານພໍເຫັນທ່ານຕ່າງຫວາດສະດຸ້ງແດ່ ຫຼົບໜີໄປທີ່ອື່ນແດ່ ຍ່າງປົບໄປທາງອື່ນແດ່ ເມີນໜ້າໜີແດ່ ປິດປະຕູເຮືອນໃສ່ແດ່ ເມື່ອທ່ານພຣະມະຫາກັດສະປະບິນທະບາດໃນເມືອງອາລະວີ ກັບຈາກບິນທະບາດຫຼັງຈາກສັນອາຫານ ຮຽກພິກຂຸທັງຫຼາຍມາຖາມວ່າ "ທ່ານທັງຫຼາຍ ເມື່ອກ່ອນເມືອງອາລະວີມີອາຫານບໍລິບູນຫາອາຫານໄດ້ງ່າຍ ພິກຂຸສົງບິນທະບາດຫາລ້ຽງຊີບໄດ້ງ່າຍ ແຕ່ບັດນີ້ ເມືອງອາລະວີກັບມີຄວາມອຶດຢາກ ອາຫານຫາໄດ້ຍາກ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້ ມີອັນໃດເປັນເຫດ ເປັນປັດໄຈໃຫ້ເມືອງອາລະວີນີ້ມີຄວາມອຶດຢາກ ຫາອາຫານໄດ້ຍາກ ຍາກທີ່ພຣະອະຣິຍະເຈົ້າ ຈະບິນທະບາດລ້ຽງຊີບໄດ້" ພິກຂຸເຫຼົ່ານັ້ນຈຶ່ງຂາບຮຽນເລື້ອງນັ້ນໃຫ້ທ່ານຮັບຮູ້

[໓໔໕] ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໃນນະຄອນຣາຊະຄືຶ ຕາມພຣະພຸດທາພິຣົມແລ້ວໄດ້ສະເດັດໄປທາງເມືອງອາລະວີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງເມືອງອາລະວີ ໄດ້ຂ່າວວ່າພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນອັກຄາລະວະເຈດີ ເຂດເມືອງອາລະວີນັ້ນ ຄັ້ງນັ້ນ ທ່ານພຣະມະຫາກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຈົນເຖິງທີ່ປະທັບ

ເມື່ອເຖິງແລ້ວໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງ ໃນທີ່ສົມຄວນ ໄດ້ຂາບທູນເລື້ອງນັ້ນໃຫ້ ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸຊາວເມືອງອາລະວີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສ້າງກຸຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງ ບໍ່ມີເຈົ້າຂອງສ້າງໃຫ້ ສ້າງເປັນຂອງສ່ວນຕົວ ບໍ່ຈຳກັດຂະໜາດ ກຸຕິສ້າງບໍ່ສຳເລັດ ພວກທ່ານເປັນຜູ້ຫຼາຍໄປດ້ວຍການຂໍ ຫຼາຍໄປດ້ວຍການອອກປາກຂໍ ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງໃຫ້ຄົນງານ ອຸປະກອນກໍ່ສ້າງສຳເລັດຮູບ ງົວ ກວຽນ ພ້າ ຂວານ ຂວານຖາກ ຈົກ ສິ່ວ ເຄືອເຂົາ ໄມ້ໄຜ່ ຫຍ້າມຸງກະຕ່າຍ ຫຍ້າແຝກ ຫຍ້າສາມັນ ດິນໜຽວ" ພວກຊາວບ້ານຖືກລົບກວນດ້ວຍການຂໍ ດ້ວຍການອອກປາກຂໍ ພົບເຫັນທ່ານທັງຫຼາຍຕ່າງພາກັນຫວາດສະດຸ້ງແດ່ ຫຼົບໜີໄປທີ່ອື່ນແດ່ ຍ່າງປີບໄປທາງອື່ນແດ່ ເມີນໜ້າໜີແດ່ ປິດປະຕູເຮືອນໃສ່ແດ່ ພົບເຫັນແມ່ງົວເຂົ້າກໍແລ່ນໜີຍ້ອນເຂົ້າໃຈວ່າເປັນພິກຂຸແດ່ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳຂອງພວກທ່ານບໍ່ສົມຄວນ ຯລຯ ບໍ່ຄວນເຮັດ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງສ້າງກຸຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງ ບໍ່ມີເຈົ້າຂອງສ້າງໃຫ້ ສ້າງເປັນຂອງສ່ວນຕົວ ບໍ່ຈຳກັດຂະໜາດ ກຸຕິສ້າງບໍ່ສຳເລັດ ພວກທ່ານເປັນຜູ້ຫຼາຍໄປດ້ວຍການຂໍ ຫຼາຍໄປດ້ວຍການອອກປາກຂໍ ດ້ວຍກ່າວວ່າ "ທ່ານທັງຫຼາຍ ຈົ່ງໃຫ້ຄົນງານ ອຸປະກອນກໍ່ສ້າງສຳເລັດຮູບ ງົວ ກວຽນ ພ້າ ຂວານ ຂວານຖາກ ຈົກ ສິ່ວ ເຄືອເຂົາ ໄມ້ໄຜ່ ຫຍ້າມຸງກະຕ່າຍ ຫຍ້າແຝກ ຫຍ້າສາມັນ ດິນໜຽວ" ດັ່ງນີ້ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງຕຳໜິພວກພິກຂຸຊາວເມືອງອາລະວີໂດຍປະການຕ່າງ ໆ ແລ້ວ ຯລຯ ຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມໃຫ້ຄ້ອຍຕາມກັບເລື້ອງນັ້ນແລ້ວຈຶ່ງຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ

## ເລື້ອງລືສີ ໘ ພີ່ນ້ອງ

[໓໘໔] "ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ມີລືສີພີ່ນ້ອງ ໘ ຄົນ ອາໄສຢູ່ໃກ້ແມ່ນ້ຳຄົງຄາ ຄັ້ງນັ້ນ ມະນີກັນຖະພະຍານາກຂຶ້ນຈາກແມ່ນ້ຳຄົງຄາເຂົ້າໄປຫາລືສີຜູ້ນ້ອງເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກຽວວົງຂະນົດທາງອ້ອມຮອບໂຕລືສີ ໆ ຮອບ ແຜ່ພັງພານໃຫຍ່ປົກເໜືອຫົວ ລືສີຜູ້ນ້ອງກັບຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຍ້ອນຄວາມຫວາດກົວພະຍານາກ

ລືສີຜູ້ອ້າຍເຫັນລືສີຜູ້ນ້ອງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຈຶ່ງຖາມວ່າ "ຍ້ອນເຫດໃດ ທ່ານຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ"

ລືສີຜູ້ນ້ອງຕອບວ່າ "ທີ່ນີ້ມີມະນີກັນຖະພະຍານາກຂຶ້ນຈາກແມ່ນ້ຳຄົງຄາ ມາຫາເຮົາແລ້ວກ້ຽວວົງຂະນົດທາງອ້ອມຮອບໂຕເຮົາ ໗ ຮອບ ແຜ່ພັງພານໃຫຍ່ປົກເໜືອຫົວ ຍ້ອນຄວາມຢ້ານພະຍານາກນັ້ນ ເຮົາຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ"

ລືສີຜູ້ອ້າຍຖາມວ່າ "ທ່ານຕ້ອງການບໍ່ໃຫ້ພະຍານາກມາຫາແມ່ນບໍ?"

ລືສີຜູ້ນ້ອງຕອບວ່າ "ແມ່ນແລ້ວ ເຮົາຕ້ອງການບໍ່ໃຫ້ພະຍານາກນັ້ນມາຫາ"

ລືສີຜູ້ອ້າຍຖາມວ່າ "ທ່ານເຫັນພະຍານາກມີອັນໃດຕິດໂຕມາແດ່"

ລືສີຜູ້ນ້ອງຕອບວ່າ "ເຮົາເຫັນແກ້ວມະນີປະດັບຢູ່ທີ່ຄໍ"

ລືສີຜູ້ອ້າຍກ່າວວ່າ "ຖ້າເຊັ່ນນັ້ນ ທ່ານຈົ່ງກ່າວຂໍແກ້ວມະນີພະຍານາກວ່າ ທ່ານຈົ່ງໃຫ້ແກ້ວມະນີແກ່ອາດຕະມາເທີ້ນ ອາດຕະມາຢາກໄດ້"

ພິກຂຸທັງຫຼາຍ ເມື່ອມະນີກັນຖະພະຍານາກຂຶ້ນຈາກແມ່ນ້ຳຄົງຄາເຂົ້າໄປຫາລືສີຜູ້ນ້ອງເຖິງທີ່ຢູ່ ພັກຢູ່ ໃນທີ່ສົມຄວນ ລືສີຜູ້ນ້ອງກ່າວວ່າ "ທ່ານຈົ່ງໃຫ້ແກ້ວມະນີແກ່ອາດຕະມາ ອາດຕະມາຢາກໄດ້" ພະຍານາກຄິດວ່າ "ພິກຂຸຂໍແກ້ວມະນີ ພິກຂຸຢາກໄດ້ແກ້ວມະນີ" ແລ້ວຟ້າວໜີໄປທັນທີ

ແມ່ນຄັ້ງທີ ໒ ມະນີກັນຖະພະຍານາກຂຶ້ນຈາກແມ່ນ້ຳຄົງຄາ ເຂົ້າໄປຫາລືສີຜູ້ນ້ອງ ໆລໆ ແມ່ນຄັ້ງທີ ໓ ລືສີຜູ້ນ້ອງກ່າວວ່າ "ທ່ານຈົ່ງໃຫ້ແກ້ວມະນີແກ່ອາດຕະມາ ອາດຕະມາຢາກໄດ້"

ລຳດັບນັ້ນ ມະນີກັນຖະພະຍານາກກ່າວກັບລືສີຜູ້ນ້ອງເປັນຄາຖາວ່າ

"ຍ້ອນແກ້ວມະນີດວງນີ້ເປັນເຫດ ເຮັດໃຫ້ເຂົ້ານ້ຳເກີດຂຶ້ນແກ່ຂ້າພະເຈົ້າຫຼວງຫຼາຍ ຂ້າພະເຈົ້າໃຫ້ແກ້ວມະນີທ່ານບໍ່ໄດ້ ທ່ານເປັນຄົນຂໍເກີນໄປ ຂ້າພະເຈົ້າຈະບໍ່ມາອາສົມຂອງທ່ານອີກແລ້ວ ທ່ານຂໍແກ້ວມະນີຈົນເຮັດໃຫ້ຂ້າພະເຈົ້າຫວາດກົວ ເໝືອນຊາຍໜຸ່ມຖືດາບຄົມທີ່ລັບດ້ວຍຫີນເຮັດໃຫ້ຜູ້ອື່ນສະດຸ້ງຢ້ານ ຂ້າພະເຈົ້າໃຫ້ແກ້ວມະນີທ່ານບໍ່ໄດ້ ທ່ານເປັນຄົນຂໍເກີນໄປ ຂ້າພະເຈົ້າຈະບໍ່ມາອາສົມຂອງທ່ານອີກແລ້ວ"[໑]

ພິກຂຸທັງຫຼາຍ ເມື່ອແລ້ວ ມະນີກັນຖະພະຍານາກຈາກໄປພ້ອມກັບຈົ່ມວ່າ "ພິກຂຸຂໍແກ້ວມະນີ ພິກຂຸຢາກໄດ້ແກ້ວມະນີ" ໄປແລ້ວບໍ່ຫວນກັບມາອີກເລີຍ ຕໍ່ມາລືສີຜູ້ນ້ອງກັບຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງຍິ່ງກວ່າແຕ່ກ່ອນ ຍ້ອນບໍ່ໄດ້ພົບພະຍານາກຮູບງາມໜ້າເບິ່ງ ລືສີຜູ້ອ້າຍເຫັນລືສີຜູ້ນ້ອງຈ່ອຍຜອມ ໆລໆ ຖາມວ່າ "ຍ້ອນເຫດໃດທ່ານຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງຍິ່ງກວ່າແຕ່ກ່ອນ" ລືສີຜູ້ນ້ອງຕອບວ່າ "ຂ້ານ້ອຍຈ່ອຍຜອມ ໆລໆ ຍ້ອນຂ້ານ້ອຍບໍ່ເຫັນພະຍານາກຮູບງາມໜ້າເບິ່ງນັ້ນ"

## ລືສີຜູ້ອ້າຍກ່າວເປັນຄາຖາວ່າ

"ບຸກຄົນບໍ່ຄວນຂໍສິ່ງທີ່ຮູ້ວ່າເປັນທີ່ຮັກຂອງເຂົາ ອັນໜຶ່ງ ຍ້ອນຂໍເກີນໄປຍ່ອມເປັນທີ່ກຽດຊັງ ພະຍານາກຖືກລືສີຂໍແກ້ວມະນີ ຈຶ່ງບໍ່ຫວນກັບມາໃຫ້ລືສີເຫັນອີກເລີຍ"

ພິກຂຸທັງຫຼາຍ ການຂໍ ການອອກປາກຂໍ ຍ່ອມບໍ່ເປັນທີ່ພໍໃຈແມ່ນພວກສັດເດຍຣັດສານເຫຼົ່ານັ້ນ ບໍ່ຕ້ອງກ່າວເຖິງພວກມະນຸດເລີຍ

## ເລື້ອງນົກຝູງໃຫຍ່

[໓໔໕] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພິກຂຸອົງໜຶ່ງຢູ່ໃນປ່າແຫ່ງໜຶ່ງ ຕີນພູເຂົາຫິມະພານ ບໍ່ໄກຈາກທີ່ນັ້ນມີໜອງນໍ້າໃຫຍ່ ນົກຝູງໃຫຍ່ທ່ຽວຫາອາຫານທີ່ໜອງນໍ້າຕະຫຼອດທັງວັນພໍຄໍ່າແລງມາກໍເຂົ້າໄປອາໄສໃນປ່າ ພິກຂຸນັ້ນລໍາຄານສຽງນົກຈຶ່ງເຂົ້າໄປຫາເຮົາເຖິງທີ່ຢູ່ ຂາບໄຫວ້ເຮົາແລ້ວນັ່ງລົງ ໃນທີ່ສົມຄວນ ເຮົາຖາມທ່ານວ່າ "ພິກຂຸ ທ່ານຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ບໍ? ທ່ານເດີນທາງມາໂດຍບໍ່ລໍາບາກແມ່ນບໍ? ທ່ານມາຈາກໃສ"

ພິກຂຸນັ້ນຂາບທູນວ່າ "ສະບາຍດີ ຂ້ານ້ອຍ ພໍເປັນຢູ່ໄດ້ ຂ້ານ້ອຍ ຂ້າພຣະອົງເດີນທາງມາໂດຍບໍ່ລໍາບາກ ຂ້ານ້ອຍ ແຖວພູເຂົາຫິມະພານມີໃນປ່າໃຫຍ່ ບໍ່ໄກຈາກທີ່ນັ້ນ ມີໜອງນໍ້າໃຫຍ່ນົກຝູງໃຫຍ່ທ່ຽວຫາອາຫານທີ່ໜອງນໍ້າຕະຫຼອດທັງວັນ ພໍຄໍ່າແລງມາກໍເຂົ້າໄປອາໄສໃນປ່າ ຂ້າພຣະອົງລໍາຄານສຽງນົກຈຶ່ງໜີມາຈາກທີ່ນັ້ນ"

"ທ່ານຕ້ອງການບໍ່ໃຫ້ຝູງນົກມາແມ່ນບໍ່"

"ຂ້າພຣະອົງ ຕ້ອງການບໍ່ໃຫ້ຝູງນົກມາ ຂ້ານ້ອຍ"

"ຖ້າແນວນັ້ນ ທ່ານຈົ່ງກັບໄປສູ່ປ່ານັ້ນ ແລ້ວເວລາປະຖົມຍາມແຫ່ງຣາຕີ ປະກາດຂຶ້ນ ໓ ຄັ້ງວ່າ "ນົກທີ່ອາໄສໃນປ່ານີ້ມີເທົ່າໃດ ຈົ່ງຟັງເຮົາ ເຮົາຕ້ອງການຂົນ ຈົ່ງໃຫ້ຂົນແກ່ເຮົາຕົວລະ ໑ ອັນ" ເວລາມັດຊິມະຍາມປະກາດຂຶ້ນ ໓ ຄັ້ງວ່າ "ນົກທີ່ອາໄສໃນປ່ານີ້ມີເທົ່າໃດ ຈົ່ງຟັງເຮົາ ເຮົາຕ້ອງການຂົນ ຈົ່ງໃຫ້ຂົນແກ່ເຮົາຕົວລະ ໑ ອັນ" ເວລາປັດສິມຍາມກໍປະກາດຂຶ້ນ ໓ ຄັ້ງວ່າ "ນົກທີ່ອາໄສໃນປ່ານີ້ມີເທົ່າໃດ ຈົ່ງຟັງເຮົາ ເຮົາຕ້ອງການຂົນ ຈົ່ງໃຫ້ຂົນແກ່ເຮົາຕົວລະ ໑ ອັນ"

ຕໍ່ມາ ພິກຂຸນັ້ນກັບໄປສູ່ປ່ານັ້ນ ເວລາປະຖົມຍາມແຫ່ງຣາຕີ ປະກາດຂຶ້ນ ໓ ຄັ້ງວ່າ "ນົກທີ່ອາໄສໃນປ່ານີ້ມີເທົ່າໃດ ຈົ່ງຟັງເຮົາ ເຮົາຕ້ອງການຂົນ ຈົ່ງໃຫ້ຂົນແກ່ເຮົາຕົວລະ ໑ ອັນ" ເວລາມັດຊິມະຍາມ ຯລຯ ປັດສິມຍາມ ກໍປະກາດເຊັ່ນນັ້ນ ໓ ຄັ້ງວ່າ "ນົກທີ່ອາໄສໃນປ່ານີ້ມີເທົ່າໃດ ຈົ່ງຟັງຂ້າພະເຈົ້າ ຯລຯ ຈົ່ງໃຫ້ຂົນແກ່ເຮົາຕົວລະ ໑ ອັນ" ເມື່ອຝູງນົກຮູ້ວ່າ "ພິກຂຸຂໍຂົນ ພິກຂຸຕ້ອງການຂົນ" ກໍພາກັນບິນໜີຈາກໄປແລ້ວບໍ່ຫວນກັບມາອີກເລີຍ

ພິກຂຸທັງຫຼາຍ ການຂໍ ການອອກປາກຂໍ ຍ່ອມບໍ່ເປັນທີ່ພໍໃຈແມ່ນຂອງພວກສັດເດຍຣັດສານເຫຼົ່ານັ້ນ ບໍ່ຈຳຕ້ອງກ່າວເຖິງພວກມະນຸດເລີຍ

## ເລື້ອງລັດຖະບານກຸນລະບຸດ

[໓໔໖] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ບິດາຂອງລັດຖະບານກຸນລະບຸດ ກ່າວເປັນຄາຖາວ່າ

"ລູກລັດຖະບານ ຄົນຈຳນວນຫຼາຍພາກັນມາຂໍພໍ່ທັງທີ່ພໍ່ກໍບໍ່ຮູ້ຈັກ ເປັນຫຍັງລູກຈຶ່ງບໍ່ຂໍພໍ່ແດ່ນໍ"

ລັດຖະບານກຸນລະບຸດກ່າວຕອບບິດາວ່າ

"ຄົນຂໍຍ່ອມບໍ່ເປັນທີ່ພໍໃຈຂອງຜູ້ຖືກຂໍ ຄົນຖືກຂໍ ເມື່ອບໍ່ໃຫ້ ກໍບໍ່ເປັນທີ່ພໍໃຈຂອງຜູ້ຂໍ ຍ້ອນແນວນັ້ນ ລູກຈຶ່ງບໍ່ຂໍພໍ່ ຢ່າໃຫ້ລູກເປັນຄົນກຽດຊັງຂອງພໍ່ເລີຍ"

ພິກຂຸທັງຫຼາຍ ລັດຖະບານກຸນລະບຸດຍັງກ່າວກັບບິດາຂອງຕົນແນວນີ້ ບໍ່ຈຳຕ້ອງກ່າວເຖິງຄົນອື່ນທີ່ກ່າວກັບຄົນອື່ນເລີຍ

[໓໔໗] ພິກຂຸທັງຫຼາຍ ຊັບສົມບັດຂອງຄະລຶຫັດລວບລວມໄວ້ໄດ້ຍາກ ເມື່ອໄດ້ມາກໍເກັບຮັກ ສາໄວ້ໄດ້ຍາກ ໂມຄະບຸຣຸດທັງຫຼາຍ ເມື່ອຊັບສົມບັດທີ່ພວກຄະລຶຫັດລວບລວມໄວ້ໄດ້ຍາກ ທັງເມື່ອໄດ້ມາແລ້ວກໍເກັບຮັກສາໄວ້ໄດ້ຍາກເຊັ່ນນີ້ ທ່ານທັງຫຼາຍກັບເປັນຜູ້ຫຼາຍໄປດ້ວຍການຂໍ ເປັນຜູ້ຫຼາຍໄປດ້ວຍການອອກປາກຂໍດ້ວຍການກ່າວວ່າ "ທ່ານທັງຫຼາຍຈົ່ງໃຫ້ຄົນງານ ອຸປະກອນກໍ່ສ້າງສຳເລັດຮູບ ງົວ ກວຽນ ພ້າ ຂວານ ຂວານຖາກ ຈົກ ສິ່ວ ເຄືອເຂົາ ໄມ້ໄຜ່ ຫຍ້າມຸງກະຕ່າຍ ຫຍ້າແຝກ ຫຍ້າສາມັນ ດິນໜຽວ" ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໓໔໘] **ກໍ ພິກຂຸຜູ້ຈະສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ເພິ່ງສ້າງໃຫ້ໄດ້ຂະໜາດ ຂະໜາດໃນການສ້າງນັ້ນ ດັ່ງນີ້: ຍາວ ໑໒ ຄືບ ກວ້າງ ໗ ຄືບ ໂດຍຄືບພຣະສຸຄົດ ຕ້ອງພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ ພິກຂຸເຫຼົ່ານັ້ນເພິ່ງສະແດງພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຖ້າພິກຂຸສ້າງກຸຕິດ້ວຍການຂໍເອົາເອງ ໃນທີ່ທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ບໍ່ພາພິກຂຸທັງຫຼາຍໄປເພື່ອສະແດງພື້ນທີ່ໃຫ້ ຫຼື ສ້າງໃຫ້ເກີນຂະໜາດ ເປັນສັງຄາທິເສດ**

### ເລື້ອງພິກຂຸຊາວເມືອງອາລະວີ ຈົບ

## ສິກຂາບົດວິພັງ

[໓໔໙] ທີ່ຊື່ວ່າ ການຂໍເອົາເອງ ຄື ຂໍຄົນງານແດ່ ອຸປະກອນກໍ່ສ້າງສຳເລັດຮູບແດ່ ງົວແດ່ ກວຽນແດ່ ພ້າແດ່ ຂວານແດ່ ຂວານຖາກແດ່ ຈົກແດ່ ສິ່ວແດ່ ເຄືອເຂົາແດ່ ໄມ້ໄຜ່ແດ່ ຫຍ້າມຸງກະຕ່າຍແດ່ ຫຍ້າແຝກແດ່ ຫຍ້າສາມັນແດ່ ດິນໜຽວແດ່ ດ້ວຍຕົນເອງ

ທີ່ຊື່ວ່າ ກຸຕິ ໄດ້ແກ່ ທີ່ຢູ່ເຊິ່ງໂບກທາສີພາຍໃນຫຼືພາຍນອກ ຫຼື ໂບກທາສີທັງພາຍໃນພາຍນອກ

ຄຳວ່າ ສ້າງ ຄື ສ້າງເອງ ຫຼື ໃຊ້ຄົນອື່ນສ້າງ

ຄຳວ່າ ທີ່ບໍ່ມີເຈົ້າຂອງສ້າງຖວາຍ ຄື ບໍ່ມີໃຜອື່ນ ບໍ່ວ່າຈະເປັນແມ່ຍິງ ຫຼື ຊາຍ ຄະລືຫັດ ຫຼືບັນພະຊິດເປັນເຈົ້າຂອງສ້າງຖວາຍ

ຄຳວ່າ ສ້າງເປັນຂອງສ່ວນຕົວ ຄື ເພື່ອປະໂຫຍດຕົນ

ຄຳວ່າ ເພິ່ງສ້າງໃຫ້ໄດ້ຂະໜາດ ຂະໜາດໃນການສ້າງນັ້ນ ດັ່ງນີ້ : ຍາວ ໑໒ ຄືບ ໂດຍຄືບພຣະສຸຄົດ ຄື ແທກດ້ານນອກກຸຕິ

ຄຳວ່າ ກວ້າງ ໗ ຄືບ ຄື ແທກດ້ານໃນຝາ

ຄຳວ່າ ຕ້ອງພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ເຫັນ ອະທິບາຍວ່າ ພິກຂຸຜູ້ຈະສ້າງກຸຕິນັ້ນ ເພິ່ງໃຫ້ແຜ້ວຖາງພື້ນທີ່ສ້າງກຸຕິ ແລ້ວເຂົ້າໄປຫາສົງ ຫົ່ມຜ້າບ່ຽງບ່າ ຂາບຕີນພິກຂຸຜູ້ແກ່ພັນສາກວ່າ ນັ່ງຍອງຍໍ້ ປະນົມມືກ່າວແນວນີ້ວ່າ “ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງການສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ຂ້ານ້ອຍຂໍໃຫ້ສົງກວດເບິ່ງພື້ນທີ່ສ້າງກຸຕິໃຫ້ ຂ້ານ້ອຍ” ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໒ ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໓ ຖ້າສົງທັງປວງສາມາດໄປກວດເບິ່ງພື້ນທີ່ສ້າງກຸຕິໄດ້ ກໍຕ້ອງໄປກວດເບິ່ງນຳກັນທຸກອົງ ຖ້າສົງບໍ່ສາມາດຈະໄປກວດເບິ່ງພື້ນທີ່ສ້າງກຸຕິໄດ້ໝົດທຸກອົງ ກໍຕ້ອງຂໍພວກພິກຂຸທີ່ສະຫຼາດສາມາດຮູ້ຈັກພື້ນທີ່ວ່າ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ແລ້ວແຕ່ງຕັ້ງ

## ວິທີແຕ່ງຕັ້ງ ແລະກຳມະວາຈາແຕ່ງຕັ້ງ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ຄືພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ວ່າ

[໓໕໐] “ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ພິກຂຸນັ້ນຂໍໃຫ້ສົງກວດເບິ່ງພື້ນທີ່ສ້າງກຸຕິ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ ແລະ ຊື່ນີ້ໃຫ້ກວດເບິ່ງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ພິກຂຸນັ້ນຂໍໃຫ້ສົງກວດເບິ່ງພື້ນທີ່ສ້າງກຸຕິ ສົງແຕ່ງຕັ້ງພິກຂຸຊື່ນີ້ແລະຊື່ນີ້ໃຫ້ກວດເບິ່ງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ແລະຊື່ນີ້ໃຫ້ກວດເບິ່ງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ແລະຊື່ນີ້ ສົງແຕ່ງຕັ້ງໃຫ້ກວດເບິ່ງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ສົງເຫັນດ້ວຍ ຍ້ອນແນວນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

## ວິທີສະແດງພື້ນທີ່

[໓໕໑] ພິກຂຸທັງຫຼາຍທີ່ໄດ້ຮັບແຕ່ງຕັ້ງເຫຼົ່ານັ້ນ ຕ້ອງໄປທີ່ນັ້ນແລ້ວເພິ່ງກວດເບິ່ງພື້ນທີ່ສ້າງກຸຕິ ໃຫ້ຮູ້ວ່າ ເປັນພື້ນທີ່ມີອັນຕະລາຍເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເປັນພື້ນທີ່ມີອັນຕະລາຍທັງບໍ່ມີບໍລິເວນໂດຍຮອບ ເພິ່ງບອກພິກຂຸອົງນັ້ນວ່າ "ຢ່າສ້າງໃນທີ່ນີ້" ຖ້າເປັນພື້ນທີ່ບໍ່ມີອັນຕະລາຍທັງມີບໍລິເວນໂດຍຮອບເພິ່ງບອກສົງວ່າ "ເປັນພື້ນທີ່ບໍ່ມີອັນຕະລາຍ ທັງມີບໍລິເວນໂດຍຮອບ" ພິກຂຸຜູ້ຈະສ້າງກຸຕິນັ້ນເພິ່ງເຂົ້າໄປຫາສົງ ຫົ່ມຜ້າບ່ຽງບ່າ ຂາບຕີນພິກຂຸຜູ້ມີພັນສາແກ່ກວ່າ ນັ່ງຢອງຢໍ້ປະນົມມືກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງການສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ຂ້ານ້ອຍຂໍໃຫ້ສົງສະແດງພື້ນທີ່ສ້າງກຸຕິ" ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໒ ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໓

## ກຳມະວາຈາຂໍໃຫ້ສົງສະແດງພື້ນທີ່ສ້າງກຸຕິ

## ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ ດັ່ງນີ້

[໓໕໒] "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ພິກຂຸນັ້ນຂໍໃຫ້ສົງ ສະແດງພື້ນທີ່ສ້າງກຸຕິ ຖ້າສົງພ້ອມກັນແລ້ວ ເພິ່ງໄປສະແດງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງກຸຕິທີ່ບໍ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ດ້ວຍການຂໍເອົາເອງ ພິກຂຸນັ້ນຂໍໃຫ້ສົງສະແດງພື້ນທີ່ສ້າງກຸຕິ ສົງສະແດງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການສະແດງພື້ນທີ່ສ້າງກຸຕິໃຫ້ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພື້ນທີ່ສ້າງກຸຕິ ສົງສະແດງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້"

[໓໕໓] ທີ່ຊື່ວ່າ ເປັນພື້ນທີ່ມີອັນຕະລາຍ ຄື ເປັນທີ່ຢູ່ຂອງມົດ ເປັນທີ່ຢູ່ຂອງປວກ ເປັນທີ່ຢູ່ຂອງໜູ ເປັນທີ່ຢູ່ຂອງງູ ເປັນທີ່ຢູ່ຂອງແມງງອດ ເປັນທີ່ຢູ່ຂອງຂີ້ເຂັບ ເປັນທີ່ຢູ່ຂອງຊ້າງ ເປັນທີ່ຢູ່ຂອງມ້າ ເປັນທີ່ຢູ່ຂອງຣາດຊະສີ ເປັນທີ່ຢູ່ຂອງເສືອໂຄ່ງ ເປັນທີ່ຢູ່ຂອງເສືອເຫຼືອງ ເປັນທີ່ຢູ່ຂອງໝີ ເປັນທີ່ຢູ່ຂອງໝາປ່າ ຫຼື ເປັນທີ່ຢູ່ຂອງສັດເດຍຣັດສານບາງເຫຼົ່າ ຢູ່ໃກ້ນາ ຢູ່ໃກ້ສວນ ຢູ່ໃກ້ລານປະຫານ ຢູ່ໃກ້ທີ່ທໍລະມານນັກໂທດ ຢູ່ໃກ້ສຸສານ ຢູ່ໃກ້ອຸທະຍານ ຢູ່ໃກ້ທີ່ຂອງຫຼວງ ຢູ່ໃກ້ໂຮງຊ້າງ ຢູ່ໃກ້ໂຮງມ້າ ຢູ່ໃກ້ຄຸກ ຢູ່ໃກ້ໂຮງສຸຣາ ຢູ່ໃກ້ຮ້ານຂາຍຊີ້ນ ຢູ່ໃກ້ຖະໜົນ ຢູ່ໃກ້ທາງສີ່ແຍກ ຢູ່ໃກ້ທີ່ປະຊຸມ ຫຼື ຢູ່ໃກ້ທາງເດີນ ນີ້ຊື່ວ່າ ພື້ນທີ່ມີອັນຕະລາຍ

ທີ່ຊື່ວ່າ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຄື ກວຽນທີ່ເຂົາຫຼຽມງົວຕາມປົກກະຕິບໍ່ສາມາດວົນໄປໄດ້ ຂັ້ນໄດບໍ່ສາມາດຈະກ່າຍວຽນໄປໄດ້ໂດຍຮອບ ນີ້ຊື່ວ່າ ພື້ນທີ່ບໍ່ມີບໍລິເວນໂດຍຮອບ

ທີ່ຊື່ວ່າ ເປັນພື້ນທີ່ບໍ່ມີອັນຕະລາຍ ຄື ບໍ່ແມ່ນທີ່ຢູ່ຂອງມົດ ບໍ່ແມ່ນທີ່ຢູ່ຂອງປວກ ບໍ່ແມ່ນທີ່ຢູ່ຂອງໜູ ບໍ່ແມ່ນທີ່ຢູ່ຂອງງູ ບໍ່ແມ່ນທີ່ຢູ່ຂອງແມງງອດ ບໍ່ແມ່ນທີ່ຢູ່ຂອງຂີ້ເຂັບ ຯລຯ ບໍ່ໃກ້ທາງເດີນ ນີ້ຊື່ວ່າ ພື້ນທີ່ບໍ່ມີອັນຕະລາຍ

ທີ່ຊື່ວ່າ ເປັນພື້ນທີ່ມີບໍລິເວນໂດຍຮອບ ຄື ກວຽນທີ່ເຂົາຫຼຽມງົວຕາມປົກກະຕິສາມາດຍ່າງວົນໄປໄດ້ ຂັ້ນໄດສາມາດກ່າຍວຽນໄປໄດ້ໂດຍຮອບ ນີ້ຊື່ວ່າ ພື້ນທີ່ມີບໍລິເວນໂດຍຮອບ

ທີ່ຊື່ວ່າ ການຂໍເອົາເອງ ອະທິບາຍວ່າ ຂໍຄົນງານ ອຸປະກອນກໍ່ສ້າງສໍາເລັດຮູບ ຯລຯ ດິນໜຽວ

ທີ່ຊື່ວ່າ ກຸຕິ ໄດ້ແກ່ ທີ່ຢູ່ເຊິ່ງໂບກທາສີສະເພາະພາຍໃນ ຫຼື ພາຍນອກ ຫຼື ໂບກທາສີທັງພາຍໃນພາຍນອກ

ຄໍາວ່າ ສ້າງ ຄື ສ້າງເອງ ຫຼື ໃຊ້ຄົນອື່ນສ້າງ

ຄໍາວ່າ ບໍ່ພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ ຫຼື ສ້າງໃຫ້ເກີນຂະໜາດ ຄວາມວ່າ ບໍ່ຂໍໃຫ້ສົງສະແດງພື້ນທີ່ສ້າງກຸຕິດ້ວຍຍັດຕິທຸຕິຍະກໍາມະວາຈາກ່ອນ ສ້າງເອງ ຫຼື ໃຊ້ຄົນອື່ນສ້າງເກີນກໍານົດແມ່ນພຽງເສັ້ນຜົມດຽວ ຈະຍາວຫຼືກວ້າງ ຕ້ອງອາບັດທຸກກົດ ຍ້ອນຄວາມພະຍາຍາມແຕ່ລະຄັ້ງ ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສໍາເລັດ ຕ້ອງອາບັດຖຸນລັດໄຈ ດິນຈີ່ກ້ອນສຸດທ້າຍສໍາເລັດແລ້ວ ຕ້ອງອາບັດສັງຄາທິເສດ

ຄໍາວ່າ ເປັນສັງຄາທິເສດ ຄວາມວ່າ ສໍາລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ຯລຯ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ "ເປັນສັງຄາທິເສດ"

## ບົດພາຊະນີ
## ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໕໔] ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດສັງຄາທິເສດ ໑ ຕົວ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສົງສະແດງພື້ນທີ່ໃຫ້

[໓໕໕] ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງເກີນຂະໜາດ

ພິກຂຸສ້າງກຸຕິເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ກັບອາບັດສັງຄາທິເສດ ໑ ຕົວ

ພິກຂຸສ້າງກຸຕິເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ກັບອາບັດສັງຄາທິເສດ

ພິກຂຸສ້າງກຸຕິເກີນຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸສ້າງກຸຕິເກີນຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສ້າງໄດ້ຂະໜາດ

ພິກຂຸສ້າງກຸຕິໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ

ພິກຂຸສ້າງກຸຕິໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງກຸຕິໄດ້ຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງກຸຕິໄດ້ຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໔ ຕົວ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ

ພິກຂຸສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນ ທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ ໔ ຕົວ

## ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ສ້າງໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໕໖] ພິກຂຸສັ່ງວ່າ “ຈົ່ງສ້າງກຸຕິໃຫ້ເຮົາ” ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໑ ຕົວ ໗ລ໗ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດ

ທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ຜູ້ຮັບຄໍາສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສັ່ງສ້າງກຸຕິ ເຂົາສ້າງເກີນຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ຜູ້ຮັບຄໍາສັ່ງສ້າງກຸຕິເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ກັບອາບັດສັງຄາທິເສດ ໑ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສັ່ງສ້າງກຸຕິ ເຂົາສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ຜູ້ຮັບຄໍາສັ່ງສ້າງກຸຕິໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເຂົາສ້າງເກີນຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ຜູ້ຮັບຄໍາສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ ຯລຯ ເປັນພື້ນທີ່ບໍ່ມີ

ອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ ໔ ຕົວ

## ສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເຂົາສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ໆລໆ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ຫຼີກໄປບໍ່ໄດ້ສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໕໗] ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແຕ່ບໍ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງເປັນພື້ນທີ່ມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໑ ຕົວ ໆລໆ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ຫຼີກໄປບໍ່ໄດ້ສັ່ງ ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແຕ່ບໍ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງເປັນພື້ນທີ່ມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ໆລໆ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ຫຼີກໄປບໍ່ໄດ້ສັ່ງ ເຂົາສ້າງເກີນຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ບໍ່ໄດ້ສັ່ງວ່າ "ກຸຕິນັ້ນຕ້ອງໄດ້ຂະໜາດ

ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງເປັນພື້ນທີ່ມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິໃຫ້ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດ ທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໑ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ຫຼີກໄປບໍ່ໄດ້ສັ່ງ ເຂົາສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແຕ່ບໍ່ໄດ້ສັ່ງວ່າ "ກຸຕິນັ້ນຕ້ອງສ້າງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ຫຼີກໄປບໍ່ໄດ້ສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເຂົາສ້າງເກີນຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແຕ່ບໍ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງສ້າງໃຫ້ໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ສ້າງເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ ໔ ຕົວ

## ຫຼີກໄປບໍ່ໄດ້ສັ່ງ ສົງສະແດງພື້ນທີ່ໃຫ້ ເຂົາສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ບໍ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງສ້າງໃຫ້ໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍແລະຕ້ອງມີບໍລິເວນໂດຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນ

ໂດຍຮອບ ຕ້ອງອາບັດທຸກກົດ ๗ລ๗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງຜິດຄຳສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໕໘] ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງຫຼືສົ່ງທູດໄປບອກວ່າ "ສົງຕ້ອງສະແດງພື້ນທີ່ໃຫ້ ແລະ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ສົງຕ້ອງສະແດງພື້ນທີ່ໃຫ້ ແລະ ຕ້ອງມີບໍລິເວນໂດຍຮອບ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

## ສ້າງຜິດຄຳສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີ

ບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ສິງຕ້ອງສະແດງພື້ນທີ່ໃຫ້" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

## ສ້າງຜິດຄຳສັ່ງ ສິງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ໄດ້ສັ່ງວ່າ "ກຸຕິນັ້ນສິງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນສິງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແລະໄດ້ສັ່ງວ່າ "ກຸຕິນັ້ນສິງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ຕ້ອງມີບໍລິເວນໂດຍຮອບ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນສິງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສິງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສັ່ງໄດ້ຂະໜາດ ເຂົາສ້າງເກີນຂະໜາດ

[໓໕໗] ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນຕ້ອງໄດ້ຂະ ໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິ

ໃຫ້ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິໃຫ້ເຮົາເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຯລຯ "ຕ້ອງໄດ້ຂະໜາດ ແລະຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ" ຯລຯ "ຕ້ອງໄດ້ຂະໜາດ ແລະ ຕ້ອງມີບໍລິເວນໂດຍຮອບ" ຯລຯ "ຕ້ອງໄດ້ຂະໜາດ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

## ສັ່ງໄດ້ຂະໜາດ ເຂົາສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິໃຫ້ໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິໃຫ້ເຮົາໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຯລຯ "ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ" ຯລຯ "ຕ້ອງເປັນພື້ນທີ່ມີບໍລິເວນໂດຍຮອບ" ຯລຯ ບໍ່ຕ້ອງອາບັດ

## ສັ່ງສ້າງກຸຕິ ສົງສະແດງພື້ນທີ່ໃຫ້ ໄດ້ຂະໜາດ ເຂົາບໍ່ສ້າງຕາມສັ່ງ

[໓໖໐] ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເຮົາ ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ທ່ານ ເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຯລຯ "ສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງໄດ້ຂະໜາດ ແລະ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ" ຯລຯ "ສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງໄດ້ຂະໜາດ ແລະ ຕ້ອງມີບໍລິເວນໂດຍຮອບ" ຯລຯ "ສົງຕ້ອງສະແດງພື້ນທີ່ໃຫ້ ແລະ ຕ້ອງໄດ້ຂະໜາດ" ຖ້າທ່ານບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

## ສັ່ງສ້າງກຸຕິ ສົງສະແດງພື້ນທີ່ໃຫ້ ໄດ້ຂະໜາດ ເຂົາສ້າງຕາມສັ່ງ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້

ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ເຮົາໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ທ່ານເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍແລະຕ້ອງມີບໍລິເວນໂດຍຮອບ" ຯລຯ "ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ" ຯລຯ "ຕ້ອງເປັນພື້ນທີ່ມີບໍລິເວນໂດຍຮອບ" ຯລຯ ບໍ່ຕ້ອງອາບັດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແຕ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໓ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ

## ສ້າງຜິດຄຳສັ່ງ ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງຜິດຄຳສັ່ງ ສ້າງເກີນຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແຕ່ໄດ້ສັ່ງວ່າ "ກຸຕິນັ້ນຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິໃຫ້ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໓ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ

## ສ້າງຜິດຄຳສັ່ງ ສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປແລະໄດ້ສັ່ງວ່າ "ກຸຕິນັ້ນຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິໃຫ້ໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງຜິດຄຳສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໓ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໓ ຕົວ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ

## ສ້າງຜິດຄຳສັ່ງ ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ແລະ ໄດ້ສັ່ງວ່າ "ກຸຕິນັ້ນສົງຕ້ອງສະແດງພື້ນທີ່ໃຫ້ຕ້ອງໄດ້ຂະໜາດ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໒ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສົງບໍ່ໄດ້ສະແດງພື້ນທີ່ໃຫ້ສ້າງຄ້າງ

[໓໖໑] ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້

ພິກຂຸນັ້ນກັບມາ ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ແກ່ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວ ກັບອາບັດສັງຄາທິເສດ ໑ ຕົວ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ແກ່ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ฯລฯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ฯລฯ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ฯລฯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ฯລฯ ຕ້ອງອາບັດສັງຄາທິເສດ

## ສົງບໍ່ໄດ້ສະແດງພື້ນທີ່ໃຫ້ສ້າງຄ້າງ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວ ฯລฯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ฯລฯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ฯລฯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງເກີນຂະໜາດສ້າງຄ້າງ

[໓໖໔] ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິໃຫ້ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໑ ຕົວ ฯລฯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ฯລฯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ฯລฯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ກັບອາບັດສັງຄາທິເສດ ໑ ຕົວ ฯລฯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສ້າງໄດ້ຂະໜາດ ສ້າງຄ້າງ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິໃຫ້ໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ

ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວ ৮ລ৮ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ৮ລ৮ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ৮ລ৮ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ສ້າງຄ້າງ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໔ ຕົວ ৮ລ৮ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ ৮ລ৮ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໑ ຕົວກັບອາບັດສັງຄາທິເສດ ໔ ຕົວ ৮ລ৮ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ ໔ ຕົວ

## ສົງສະແດງພື້ນທີ່ໃຫ້ ສ້າງໄດ້ຂະໜາດ ສ້າງຄ້າງ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ ໄດ້ຂະໜາດ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ກຸຕິນັ້ນແກ່ພິກຂຸອື່ນ ຫຼື ຮື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນ ຫຼື ບໍ່ຮື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວ ৮ລ৮ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ৮ລ৮ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສັ່ງວ່າ "ຈົ່ງສ້າງກຸຕິໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງກຸຕິທີ່ສົງສະແດງພື້ນທີ່ໃຫ້ໄດ້ຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງຄ້າງ ສ້າງຕໍ່

[๓๒๓] ກຸຕິຕົນສ້າງຄ້າງໄວ້ ພິກຂຸສ້າງຕໍ່ຈົນສຳເລັດດ້ວຍຕົນເອງຕ້ອງອາບັດສັງຄາທິເສດ
ກຸຕິຕົນສ້າງຄ້າງໄວ້ ພິກຂຸໃຊ້ຜູ້ອື່ນສ້າງຕໍ່ຈົນສຳເລັດ ຕ້ອງອາບັດສັງຄາທິເສດ
ກຸຕິຜູ້ອື່ນສ້າງຄ້າງໄວ້ ພິກຂຸສ້າງຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດສັງຄາທິເສດ
ກຸຕິຜູ້ອື່ນສ້າງຄ້າງໄວ້ ພິກຂຸໃຊ້ຜູ້ອື່ນສ້າງຕໍ່ຈົນສຳເລັດ ຕ້ອງອາບັດສັງຄາທິເສດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໖໔] ໑. ພິກຂຸສ້າງເງື້ອມຜາມີປະຕູ
໒. ພິກຂຸຕົບແຕ່ງຖໍ້າ
໓. ພິກຂຸສ້າງກຸຕິຫຍ້າ
໔. ພິກຂຸສ້າງກຸຕິເພື່ອພິກຂຸອື່ນ
໕. ພິກຂຸສ້າງອາຄານນອກຈາກນັ້ນ ຍົກເວັ້ນອາຄານທີ່ພັກຂອງຕົນ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ກຸຕິກາຣະສິກຂາບົດທີ ໖ ຈົບ**

# ໗. ວິຫາຣະກາຣະສິກຂາບົດ

## ວ່າດ້ວຍການສ້າງວິຫານ

### ເລື້ອງພຣະສັນນະ

[໓໖໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນໂຄສິຕາຣາມ ເຂດນະຄອນໂກສໍາພີ ຄັ້ງນັ້ນ ເສດຖີຜູ້ອຸປັດຖາກທ່ານພຣະສັນນະ ບອກທ່ານພຣະສັນນະວ່າ "ທ່ານຜູ້ຈະເລີນ ທ່ານໂຜດກວດເບິ່ງສະຖານທີ່ສ້າງວິຫານ ຂ້າພະເຈົ້າຈັກໃຫ້ສ້າງວິຫານຖວາຍ"

ຕໍ່ມາ ທ່ານພຣະສັນນະໃຫ້ແຜ້ວຖາງສະຖານທີ່ສ້າງວິຫານ ໃຊ້ຄົນຕັດຕົ້ນໄມ້ຣຸກຂະເຈດີຕົ້ນໜຶ່ງທີ່ຊາວບ້ານຊາວນິຄົມ ຊາວເມືອງ ຊາວຊົນນະບົດ ຊາວແວ່ນແຄວ້ນເຄົາຣົບ ບູຊາ ພວກຊາວບ້ານຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງໃຊ້ຄົນຕັດຕົ້ນໄມ້ຣຸກຂະເຈດີທີ່ຊາວບ້ານ ຊາວນິຄົມ ຊາວເມືອງ ຊາວຊົນນະບົດ ຊາວແວ່ນແຄວ້ນເຄົາຣົບ ບູຊານໍ ພຣະສະມະນະເຊື້ອສາຍສາກະຍະບຸດ ບຽດບຽນຕົ້ນໄມ້ເຊິ່ງມີອິນຊີດຽວ"

ພິກຂຸທັງຫຼາຍໄດ້ຍິນຊາວບ້ານຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ฯລฯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະສັນນະ ຈຶ່ງໃຊ້ຄົນຕັດຕົ້ນໄມ້ຣຸກຂະເຈດີທີ່ຊາວບ້ານ ฯລฯ ຊາວແວ່ນແຄວ້ນເຄົາຣົບ ບູຊານໍ" ເມື່ອພິກຂຸເຫຼົ່ານັ້ນຕໍາໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມພິກຂຸສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະສັນນະວ່າ "ສັນນະ ໄດ້ຂ່າວວ່າ ທ່ານໃຊ້ຄົນຕັດຕົ້ນໄມ້ຣຸກຂະເຈດີທີ່ຊາວບ້ານ ຊາວນິຄົມ ຊາວເມືອງ ຊາວຊົນນະບົດ ຊາວແວ່ນແຄວ້ນເຄົາຣົບ ບູຊາແມ່ນບໍ?" ທ່ານພຣະສັນນະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ວ່າ "ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງໃຊ້ຄົນຕັດຕົ້ນໄມ້ຣຸກຂະເຈດີທີ່ຊາວບ້ານ ຊາວນິຄົມ ຊາວເມືອງ ຊາວຊົນນະບົດ ຊາວແວ່ນແຄວ້ນເຄົາຣົບ ບູຊານໍ ໂມຄະບຸຣຸດ ຍ້ອນພວກຊາວບ້ານມີຄວາມສຳຄັນວ່າ "ຕົ້ນໄມ້ມີຊີວະ" ໂມຄະບຸຣຸດ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໄສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໓໖໖] **ກໍ ພິກຂຸຈະສ້າງວິຫານໃຫຍ່ ທີ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ຕ້ອງພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ ພິກຂຸເຫຼົ່ານັ້ນເພິ່ງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຖ້າພິກຂຸໃຫ້ສ້າງວິຫານໃຫຍ່ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຫຼື ບໍ່ພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ ເປັນສັງຄາທິເສດ**

### ເລື້ອງພຣະສັນນະ ຈົບ

## ສິກຂາບົດວິພັງ

[໓໖໗] ວິຫານທີ່ຊື່ວ່າ ໃຫຍ່ ໄດ້ແກ່ ວິຫານມີເຈົ້າຂອງສ້າງຖວາຍ

ຊື່ວ່າ ວິຫານ ໄດ້ແກ່ ທີ່ຢູ່ເຊິ່ງໂບກທາສີພາຍໃນ ຫຼື ພາຍນອກ ຫຼື ໂບກທາສີທັງພາຍໃນພາຍນອກ

ຄຳວ່າ ສ້າງ ຄື ສ້າງເອງ ຫຼື ໃຊ້ຄົນອື່ນສ້າງ

ຄຳວ່າ ທີ່ມີເຈົ້າຂອງສ້າງຖວາຍ ຄື ທີ່ມີແມ່ຍິງ ຫຼື ຊາຍ ຄະລືຫັດ ຫຼື ບັນພະຊິດ ເປັນເຈົ້າຂອງສ້າງຖວາຍ

ຄຳວ່າ ສ້າງເປັນຂອງສ່ວນຕົວ ຄື ເພື່ອປະໂຫຍດຕົນ

ຄຳວ່າ ຕ້ອງພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ ອະທິບາຍວ່າ ພິກຂຸຜູ້ຈະສ້າງ ວິຫານນັ້ນ ເພິ່ງໃຫ້ແຜ້ວຖາງພື້ນທີ່ສ້າງວິຫານແລ້ວເຂົ້າໄປຫາສົງ ຫົ່ມຜ້າບ່ຽງບ່າ ຂາບຕີນພິກຂຸຜູ້ແກ່ພັນສາກວ່າ ນັ່ງຢອງຢໍ້ປະນົມມື ກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍ ຕ້ອງການຈະສ້າງວິຫານໃຫຍ່ ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ຂ້ານ້ອຍ ຂໍໃຫ້ສົງກວດເບິ່ງພື້ນທີ່

ສ້າງວິຫານດ້ວຍ ຂ້ານ້ອຍ" ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໘ ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໓ ຖ້າສົງທັງປວງສາມາດໄປກວດເບິ່ງພື້ນທີ່ສ້າງວິຫານໄດ້ ກໍຕ້ອງໄປກວດເບິ່ງນຳກັນທຸກອົງ ຖ້າສົງທັງປວງບໍ່ສາມາດຈະໄປກວດເບິ່ງພື້ນທີ່ສ້າງວິຫານໄດ້ໝົດທຸກອົງ ກໍຕ້ອງຂໍພວກພິກຂຸທີ່ສະຫຼາດສາມາດຮູ້ຈັກພື້ນທີ່ ວ່າເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີອັນຕະລາຍເປັນພື້ນທີ່ມີບໍລິເວນໂດຍຮອບ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ແລ້ວແຕ່ງຕັ້ງ

## ວິທີແຕ່ງຕັ້ງ ແລະກຳມະວາຈາແຕ່ງຕັ້ງ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ ຄືພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

[໓໖໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງວິຫານໃຫຍ່ທີ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ພິກຂຸນັ້ນຂໍໃຫ້ສົງກວດເບິ່ງພື້ນທີ່ສ້າງວິຫານ ຖ້າສົງພ້ອມກັນແລ້ວ ເພິ່ງແຕ່ງຕັ້ງພິກຂຸຊື່ນີ້ ແລະ ຊື່ນີ້ ໃຫ້ກວດເບິ່ງທີ່ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງວິຫານໃຫຍ່ ທີ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ພິກຂຸນັ້ນຂໍໃຫ້ສົງກວດເບິ່ງພື້ນທີ່ສ້າງວິຫານ ສົງແຕ່ງຕັ້ງພິກຂຸຊື່ນີ້ແລະຊື່ນີ້ ໃຫ້ກວດເບິ່ງພື້ນທີ່ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ແລະຊື່ນີ້ ໃຫ້ກວດເບິ່ງພື້ນທີ່ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ ແລະ ຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ກວດເບິ່ງພື້ນທີ່ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ວິທີຂໍສົງສະແດງພື້ນທີ່ສ້າງວິຫານ

[໓໖໘] ພິກຂຸທັງຫຼາຍທີ່ໄດ້ຮັບແຕ່ງຕັ້ງເຫຼົ່ານັ້ນ ຕ້ອງໄປທີ່ນັ້ນແລ້ວເພິ່ງກວດເບິ່ງພື້ນທີ່ສ້າງວິຫານ ໃຫ້ຮູ້ວ່າ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເປັນພື້ນທີ່ມີອັນຕະລາຍທັງບໍ່ມີບໍລິເວນໂດຍຮອບເພິ່ງບອກພິກຂຸອົງນັ້ນວ່າ "ຢ່າສ້າງໃນທີ່ນີ້" ຖ້າເປັນພື້ນທີ່ບໍ່ມີອັນຕະລາຍທັງມີບໍລິເວນໂດຍຮອບເພິ່ງບອກສົງວ່າ "ເປັນພື້ນທີ່ບໍ່ມີອັນຕະລາຍທັງມີບໍລິເວນໂດຍຮອບ" ພິກຂຸຜູ້ຈະສ້າງວິຫານນັ້ນເພິ່ງເຂົ້າໄປຫາສົງ ຫົ່ມຜ້າບ່ຽງບ່າ ຂາບຕີນພິກຂຸຜູ້ແກ່ພັນສາກວ່າ ນັ່ງຍອງຍໍ້ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງການສ້າງວິຫານໃຫຍ່ ທີ່ມີເຈົ້າຂອງສ້າງຖວາຍ ສ້າງເປັນ

ຂອງສ່ວນຕົວ ຂ້ານ້ອຍຂໍໃຫ້ສົງສະແດງພື້ນທີ່ສ້າງວິຫານ" ເພິ່ງກ່າວຂໍພິກຂຸທັງຫຼາຍດັ່ງນີ້ເປັນຄັ້ງທີ ໘ ເພິ່ງກ່າວຂໍພິກຂຸທັງຫຼາຍ ດັ່ງນີ້ເປັນຄັ້ງທີ ໓

## ກຳມະວາຈາຂໍໃຫ້ສົງສະແດງພື້ນທີ່ສ້າງວິຫານ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ ດັ່ງນີ້

[໓໗໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງວິຫານໃຫຍ່ທີ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ພິກຂຸນັ້ນຂໍໃຫ້ສົງສະແດງພື້ນທີ່ສ້າງວິຫານ ຖ້າສົງພ້ອມກັນແລ້ວ ເພິ່ງໄປສະແດງພື້ນທີ່ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຕ້ອງການຈະສ້າງວິຫານໃຫຍ່ທີ່ມີເຈົ້າຂອງສ້າງຖວາຍ ສ້າງເປັນຂອງສ່ວນຕົວ ພິກຂຸນັ້ນຂໍໃຫ້ສົງສະແດງພື້ນທີ່ສ້າງວິຫານ ສົງສະແດງພື້ນທີ່ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການສະແດງພື້ນທີ່ ສ້າງວິຫານໃຫ້ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພື້ນທີ່ສ້າງວິຫານສົງສະແດງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້

[໓໗໑] ທີ່ຊື່ວ່າ ເປັນພື້ນທີ່ມີອັນຕະລາຍ ຄື ເປັນທີ່ຢູ່ຂອງມົດ ເປັນທີ່ຢູ່ຂອງປວກ ເປັນທີ່ຢູ່ຂອງໜູ ເປັນທີ່ຢູ່ຂອງງູ ເປັນທີ່ຢູ່ຂອງແມງງອດ ເປັນທີ່ຢູ່ຂອງຂີ້ເຂັບ ເປັນທີ່ຢູ່ຂອງຊ້າງ ເປັນທີ່ຢູ່ຂອງມ້າ ເປັນທີ່ຢູ່ຂອງຣາດຊະສີ ເປັນທີ່ຢູ່ຂອງເສືອໂຄ່ງ ເປັນທີ່ຢູ່ຂອງເສືອເຫຼືອງ ເປັນທີ່ຢູ່ຂອງໝີ ເປັນທີ່ຢູ່ຂອງໝາປ່າ ຫຼື ເປັນທີ່ຢູ່ຂອງສັດເດຍຣັດສານບາງເຫຼົ່າ ຢູ່ໃກ້ນາ ຢູ່ໃກ້ສວນ ຢູ່ໃກ້ລານປະຫານ ຢູ່ໃກ້ທີ່ທໍລະມານນັກໂທດ ຢູ່ໃກ້ສຸສານ ຢູ່ໃກ້ອຸທະຍານ ຢູ່ໃກ້ທີ່ຂອງຫຼວງ ຢູ່ໃກ້ໂຮງຊ້າງ ຢູ່ໃກ້ໂຮງມ້າ ຢູ່ໃກ້ຄຸກ ຢູ່ໃກ້ໂຮງສຸຣາ ຢູ່ໃກ້ຮ້ານຂາຍຊີ້ນ ຢູ່ໃກ້ຖະໜົນ ຢູ່ໃກ້ທາງສີ່ແຍກ ຢູ່ໃກ້ທີ່ປະຊຸມ ຫຼື ຢູ່ໃກ້ທາງເດີນ ນີ້ຊື່ວ່າ ພື້ນທີ່ມີອັນຕະລາຍ

ທີ່ຊື່ວ່າ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຄື ກວຽນທີ່ເຂົາຫຽມງົວຕາມປົກກະຕິບໍ່ສາມາດວົນໄປໄດ້ ຂັ້ນໄດບໍ່ສາມາດຈະກ່າຍວຽນໄປໄດ້ໂດຍຮອບ ນີ້ຊື່ວ່າ ພື້ນທີ່ບໍ່ມີບໍລິເວນໂດຍຮອບ

ທີ່ຊື່ວ່າ ເປັນພື້ນທີ່ບໍ່ມີອັນຕະລາຍ ຄື ບໍ່ແມ່ນທີ່ຢູ່ຂອງມົດ ຯລຯ ບໍ່ໃກ້ທາງເດີນ ນີ້ຊື່ວ່າ ພື້ນທີ່ບໍ່ມີອັນຕະລາຍ

ທີ່ຊື່ວ່າ ເປັນພື້ນທີ່ມີບໍລິເວນໂດຍຮອບ ຄື ກວຽນທີ່ເຂົາຫຽມງົວຕາມປົກກະຕິສາມາດວົນໄປໄດ້ ຂັ້ນໄດສາມາດກ່າຍວຽນໄປໄດ້ໂດຍຮອບ ນີ້ຊື່ວ່າ ພື້ນທີ່ມີບໍລິເວນໂດຍຮອບ

ວິຫານທີ່ຊື່ວ່າ ໃຫຍ່ ຄື ວິຫານທີ່ມີເຈົ້າຂອງ

ທີ່ຊື່ວ່າ ວິຫານ ໄດ້ແກ່ ທີ່ຢູ່ເຊິ່ງໂບກທາສີສະເພາະພາຍໃນ ຫຼື ພາຍນອກ ຫຼື ໂບກທາສີທັງພາຍໃນພາຍນອກ

ຄຳວ່າ ສ້າງ ຄື ສ້າງເອງ ຫຼື ໃຊ້ຄົນອື່ນສ້າງ

ຄຳວ່າ ບໍ່ພາພິກຂຸທັງຫຼາຍໄປສະແດງພື້ນທີ່ໃຫ້ ຄື ບໍ່ຂໍໃຫ້ສົງສະແດງພື້ນທີ່ສ້າງວິຫານດ້ວຍຍັດຕິທຸຕິຍະກຳມະວາຈາກ່ອນ ສ້າງເອງ ຫຼື ໃຊ້ຄົນອື່ນສ້າງ ຕ້ອງອາບັດທຸກກົດ ຍ້ອນຄວາມພະຍາຍາມແຕ່ລະຄັ້ງ ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ຯລຯ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ "ເປັນສັງຄາທິເສດ"

## ບົດພາຊະນີ

## ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໗໘] ພິກຂຸສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໘ ຕົວກັບອາບັດສັງຄາທິເສດ ໑ ຕົວ

ພິກຂຸສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສົງສະແດງພື້ນທີ່ໃຫ້

ພິກຂຸສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໘ ຕົວ

ພິກຂຸສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ

ພິກຂຸສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສັ່ງສ້າງວິຫານ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໗໓] ພິກຂຸສັ່ງວ່າ “ຈົ່ງສ້າງວິຫານໃຫ້ເຮົາ” ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໑ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສັ່ງສ້າງວິຫານ ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ “ຈົ່ງສ້າງວິຫານໃຫ້ເຮົາ” ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ຫຼີກໄປ ບໍ່ໄດ້ສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໗໔] ພິກຂຸສັ່ງວ່າ “ຈົ່ງສ້າງວິຫານໃຫ້ເຮົາ” ແລ້ວຫຼີກໄປ ແຕ່ບໍ່ໄດ້ສັ່ງວ່າ “ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ” ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວກັບອາບັດສັງຄາທິເສດ ໑ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ຯລຯ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ຫຼີກໄປ ບໍ່ໄດ້ສັ່ງ ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ “ຈົ່ງສ້າງວິຫານໃຫ້ເຮົາ” ແລ້ວຫຼີກໄປແຕ່ບໍ່ໄດ້ສັ່ງໄວ້ວ່າ “ວິຫານນັ້ນສົງຕ້ອງສະ ແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ” ຜູ້ຮັບຄຳສັ່ງສ້າງວິ ຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໔ ຕົວ ຯລຯ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງ

ອາບັດທຸກກົດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງຜິດຄຳສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໗໕] ພິກຂຸສັ່ງວ່າ "ຈົ່ງສ້າງວິຫານໃຫ້ເຮົາ" ແລ້ວຫຼີກໄປ ແຕ່ໄດ້ສັ່ງວ່າ "ວິຫານ ນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ສົ່ງທູດໄປບອກວ່າ "ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຖ້າບໍ່ໄປເອງ ຫຼື ບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ ໆລໆ ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ແລະ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ໆລໆ ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ແລະຕ້ອງມີບໍລິເວນໂດຍຮອບ ໆລໆ ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຫາກບໍ່ໄປເອງຫຼືບໍ່ສົ່ງທູດໄປບອກ ຕ້ອງອາບັດທຸກກົດ

## ສ້າງຜິດຄຳສັ່ງ ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງວິຫານໃຫ້ເຮົາ" ແລ້ວຫຼີກໄປ ແລະໄດ້ສັ່ງວ່າ "ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບດ້ວຍ ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸນັ້ນຮູ້ຂ່າວວ່າ "ເຂົາສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ເຮົາ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ" ພິກຂຸນັ້ນເພິ່ງໄປເອງ ຫຼື ເພິ່ງສົ່ງທູດໄປບອກວ່າ "ວິຫານນັ້ນຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍແລະຕ້ອງມີບໍລິເວນໂດຍຮອບ" ໆລໆ "ຕ້ອງເປັນທີ່ບໍ່ມີອັນຕະລາຍ" ໆລໆ "ຕ້ອງມີບໍລິເວນໂດຍຮອບ" ໆລໆ ບໍ່ຕ້ອງອາບັດ

## ສ້າງຜິດຄຳສັ່ງ ສົງບໍ່ໄດ້ສະແດງພື້ນທີ່ໃຫ້

[໓໗໖] ພິກຂຸສັ່ງວ່າ "ຈົ່ງສ້າງວິຫານໃຫ້ເຮົາ" ແລ້ວຫຼີກໄປ ແຕ່ໄດ້ສັ່ງວ່າ "ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໓ ຕົວ ໆລໆ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໘ ຕົວ ໆລໆ ເປັນພື້ນທີ່ບໍ່ມີອັນຕະລາຍ

ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໔ ຕົວ ໗ລ໗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ

## ສ້າງຜິດຄຳສັ່ງ ສົງສະແດງພື້ນທີ່ໃຫ້

ພິກຂຸສັ່ງວ່າ "ຈົ່ງສ້າງວິຫານໃຫ້ເຮົາ" ແລ້ວຫຼີກໄປ ແຕ່ໄດ້ສັ່ງວ່າ "ວິຫານນັ້ນສົງຕ້ອງສະແດງພື້ນທີ່ໃຫ້ ຕ້ອງເປັນພື້ນທີ່ບໍ່ມີອັນຕະລາຍ ແລະ ຕ້ອງມີບໍລິເວນໂດຍຮອບ" ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໔ ຕົວ ໗ລ໗ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ໗ລ໗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ພິກຂຸຜູ້ສ້າງຕ້ອງອາບັດທຸກກົດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງຄ້າງ

[໓໗໗] ພິກຂຸສັ່ງວ່າ "ຈົ່ງສ້າງວິຫານໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ວິຫານນັ້ນແກ່ພິກຂຸອື່ນຫຼືຣື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນຫຼືບໍ່ຣື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວ ກັບອາບັດສັງຄາທິເສດ ໑ ຕົວ ໗ລ໗ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ໗ລ໗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ ໗ລ໗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດສັງຄາທິເສດ

## ສົງສະແດງພື້ນທີ່ໃຫ້ ສ້າງຄ້າງ

ພິກຂຸສັ່ງວ່າ "ຈົ່ງສ້າງວິຫານໃຫ້ເຮົາ" ແລ້ວຫຼີກໄປ ຜູ້ຮັບຄຳສັ່ງສ້າງວິຫານທີ່ສົງສະແດງພື້ນທີ່ໃຫ້ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຖ້າເຂົາສ້າງຄ້າງໄວ້ ພິກຂຸນັ້ນກັບມາ ເພິ່ງໃຫ້ວິຫານນັ້ນແກ່ພິກຂຸອື່ນຫຼືຣື້ສ້າງໃໝ່ ຖ້າບໍ່ໃຫ້ພິກຂຸອື່ນຫຼືບໍ່ຣື້ສ້າງໃໝ່ ຕ້ອງອາບັດທຸກກົດ ໔ ຕົວ ໗ລ໗ ເປັນພື້ນທີ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໗ລ໗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ໗ລ໗ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ

## ສ້າງຄ້າງ ສ້າງຕໍ່

[๓๗๒] ວິຫານຕົນສ້າງຄ້າງໄວ້ ພິກຂຸສ້າງຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັສັງຄາທິເສດ

ວິຫານຕົນສ້າງຄ້າງໄວ້ ພິກຂຸໃຊ້ຜູ້ອື່ນສ້າງຕໍ່ຈົນສຳເລັດ ຕ້ອງອາບັດສັງຄາທິເສດ

ວິຫານຜູ້ອື່ນສ້າງຄ້າງໄວ້ ພິກຂຸສ້າງຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດສັງຄາທິເສດ

ວິຫານຜູ້ອື່ນສ້າງຄ້າງໄວ້ ພິກຂຸໃຊ້ຜູ້ອື່ນສ້າງຕໍ່ຈົນສຳເລັດ ຕ້ອງອາບັດສັງຄາທິເສດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[๓๗๓] ໑. ພິກຂຸສ້າງເງື້ອມຜາມີປະຕູ
໒. ພິກຂຸຕົບແຕ່ງຖ້ຳ
໓. ພິກຂຸສ້າງກຸຕິຫຍ້າ
໔. ພິກຂຸສ້າງວິຫານເພື່ອພິກຂຸອື່ນ
໕. ພິກຂຸສ້າງອາຄານນອກຈາກນັ້ນ ຍົກເວັ້ນອາຄານທີ່ພັກຂອງຕົນ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ວິຫາຣະກາຣະສິກຂາບົດທີ ໗ ຈົບ**

# ໗. ປະຖົມທຸດຖະໂທສະສິກຂາບົດ
# ວ່າດ້ວຍພິກຂຸຂັດເຄືອງມີໂທສະ ສິກຂາບົດທີ ໑
## ເລື້ອງພຣະທັບພະມັນລະບຸດ

[៣໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະທັບພະມັນລະບຸດ ບັນລຸອະຣະຫັດຕະຜົນ ເມື່ອອາຍຸໄດ້ພຽງແຕ່ ໗ ປີ ທຳວິເສດຢ່າງໃດຢ່າງໜຶ່ງທີ່ພຣະສາວົກເພິ່ງບັນລຸ ທ່ານກໍໄດ້ບັນລຸແລ້ວທັງໝົດ ບໍ່ມີກິດອື່ນໃດ ທີ່ຈະເພິ່ງເຮັດຍິ່ງກວ່ານີ້ ຫຼື ກິດທີ່ເຮັດສຳເລັດແລ້ວ ເຊິ່ງຈະເຮັດຕື່ມອີກກໍບໍ່ມີ

ຕໍ່ມາ ທ່ານພຣະທັບພະມັນລະບຸດຫຼີບຫຼີກຢູ່ໃນທີ່ສະຫງັດ ເກີດຄວາມຄິດຄຳນຶງ ແບບນີ້ວ່າ ເຮົາໄດ້ບັນລຸອະຣະຫັດຕະຜົນເມື່ອອາຍຸ ໗ ປີ ທຳວິເສດຢ່າງໃດຢ່າງໜຶ່ງທີ່ພຣະສາວົກເພິ່ງບັນລຸ ເຮົາກໍໄດ້ບັນລຸແລ້ວທັງໝົດ ບໍ່ມີກິດອື່ນໃດທີ່ຈະເພິ່ງເຮັດໃຫ້ຍິ່ງກວ່ານີ້ ຫຼື ກິດທີ່ເຮັດສຳເລັດແລ້ວເຊິ່ງຈະເຮັດຕື່ມອີກກໍບໍ່ມີ ເຮົາຄວນຊ່ອຍອັນໃດສົງໄດ້ແດ່

ລຳດັບນັ້ນ ທ່ານຕຶກລົງໃຈວ່າ "ຖ້າຈັ່ງຊັ້ນ ເຮົາຄວນຈັດແຈງເສນາສະນະແລະແຈກ ພັດຕາຫານແກ່ສົງ" ເມື່ອອອກຈາກທີ່ຫຼີບຫຼີກໃນເວລາແລງ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງ ໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ຂ້າພຣະອົງຫຼີບຫຼີກຢູ່ໃນທີ່ສະຫງັດ ມີຄວາມຄິດແບບນີ້ວ່າ "ເຮົາໄດ້ບັນລຸອະຣະຫັດຕະຜົນເມື່ອອາຍຸ ໗ ປີ ຯລຯ ຫຼື ກິດທີ່ເຮັດສຳເລັດແລ້ວເຊິ່ງຈະເຮັດຕື່ມອີກກໍບໍ່ມີ ເຮົາຄວນຊ່ອຍອັນໃດສົງໄດ້ແດ່" ຖ້າຈັ່ງຊັ້ນແລ້ວເຮົາເປັນຜູ້ຈັດແຈງເສນາສະນະແລະແຈກພັດຕາຫານແກ່ສົງ ຂ້າພຣະອົງ ປາຖະໜາເປັນຜູ້ຈັດແຈງເສນາສະນະແລະແຈກພັດຕາຫານແກ່ສົງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ທັບພະ ຖ້າແບບນັ້ນ ທ່ານຈົ່ງເປັນຜູ້ຈັດແຈງເສນາສະນະ ແລະ ແຈກພັດຕາຫານແກ່ສົງ" ພຣະທັບພະມັນລະບຸດຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ

## ແຕ່ງຕັ້ງເສນາສະນະປັນຍາປະກະແລະພັດຕຸດເທສະກະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ສົງຈົ່ງແຕ່ງຕັ້ງທັບພະມັນລະບຸດໃຫ້ເປັນເສນາສະນະປັນຍາປະກະ ແລະ ພັດຕຸດເທສະກະ

# ວິທີແຕ່ງຕັ້ງ ແລະກຳມະວາຈາແຕ່ງຕັ້ງ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ ຄື ເບື້ອງຕົ້ນເພິ່ງຂໍໃຫ້ທັບພະມັນລະບຸດຮັບ ເມື່ອແລ້ວພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ວ່າ

[៣៧១] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ເພິ່ງແຕ່ງຕັ້ງທ່ານພຣະທັບພະມັນລະບຸດໃຫ້ເປັນເສນາສະນະປັນຍາປະກະ ແລະ ພັດຕຸດເທສະກະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພຣະທັບພະມັນລະບຸດໃຫ້ເປັນເສນາສະນະປັນຍາປະກະ ແລະ ພັດຕຸດເທສະກະ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພຣະທັບພະມັນລະ ບຸດໃຫ້ເປັນເສນາສະນະປັນຍາປະກະ ແລະ ພັດຕຸດເທສະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພຣະທັບພະມັນລະບຸດ ສົງແຕ່ງຕັ້ງໃຫ້ເປັນເສນາສະນະປັນຍາປະກະ ແລະ ພັດຕຸດເທສະກະແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

[៣៧៤] ກໍແລ ທ່ານພຣະທັບພະມັນລະບຸດ ໄດ້ຮັບແຕ່ງຕັ້ງແລ້ວຍ່ອມຈັດແຈງເສນາສະນະ ສຳລັບໝູ່ພິກຂຸຜູ້ມີຄຸນສົມບັດສະເໝີກັນລວມໄວ້ທີ່ດຽວກັນ ດັ່ງນີ້ ຄື ຈັດແຈງເສນາສະນະສຳລັບພິກຂຸຜູ້ຊົງພຣະສູດລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ ພິກຂຸເຫຼົ່ານັ້ນຈັກຊັກຊ້ອມພຣະສູດກັນ

ຈັດແຈງເສນາສະນະສຳລັບພິກຂຸຜູ້ຊົງພຣະວິໄນລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ ພິກຂຸເຫຼົ່ານັ້ນຈັກວິນິດໄສພຣະວິໄນກັນ

ຈັດແຈງເສນາສະນະສຳລັບພິກຂຸຜູ້ຊົງພຣະອະພິທຳລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ ພິກຂຸເຫຼົ່ານັ້ນຈັກສົນທະນາພຣະອະພິທຳກັນ

ຈັດແຈງເສນາສະນະສຳລັບພິກຂຸຜູ້ໄດ້ຊານລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ ພິກຂຸເຫຼົ່ານັ້ນຈັກບໍ່ລົບກວນກັນ

ຈັດແຈງເສນາສະນະສຳລັບພິກຂຸຜູ້ມັກກ່າວຕິຣັດສານະກະຖາ ຜູ້ຫຼາຍໄປດ້ວຍການບຳລຸງຮ່າງກາຍລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ ພິກຂຸເຫຼົ່ານີ້ຈະຢູ່ຕາມຄວາມພໍໃຈ

ທ່ານພຣະທັບພະມັນລະບຸດນັ້ນເຂົ້າເຕໂຊກະສິນ ແລ້ວຈັດແຈງເສນາສະນະດ້ວຍແສງສະຫວ່າງນັ້ນ ສຳລັບພິກຂຸທີ່ມາໃນເວລາຄ່ຳຄືນ

ພິກຂຸທັງຫຼາຍຈົງໃຈມາໃນເວລາຄ່ຳຄືນ ດ້ວຍປະສົງວ່າ "ພວກເຮົາຈະຊົມອິດທິປາຕິຫານຂອງທ່ານພຣະທັບພະມັນລະບຸດ" ກໍມີ ພວກທ່ານພາກັນເຂົ້າໄປຫາທ່ານພຣະທັບພະມັນລະບຸດກ່າວວ່າ "ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍ"

ທ່ານພຣະທັບພະມັນລະບຸດກ່າວວ່າ "ທ່ານທັງຫຼາຍຕ້ອງການພັກຢູ່ໄສນໍ ຂ້າພະເຈົ້າຈະຈັດແຈງທີ່ຢູ່ໄສ"

ພິກຂຸເຫຼົ່ານັ້ນຈິງໃຈອ້າງທີ່ໄກ ໆ ວ່າ "ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ພູເຂົາຄິດຊະກູດ ຯລຯ ທີ່ເຫວສຳລັບຖິ້ມໂຈນ ຯລຯ ທີ່ກາສິລາຂ້າງພູເຂົາອິສິຄິລິ ຯລຯ ທີ່ຖ້ຳສັດຕະບັນຄູຫາຂ້າງພູເຂົາເວພາລະ ຯລຯ ທີ່ເງື້ອມເຂົາສັບປະໂສນະຖິກະໃກ້ສີຕະວັນ ຯລຯ ທີ່ຊອກເຂົາໂຄຕະມະກະ ຯລຯ ທີ່ຊອກເຂົາຕິນະທຸກະ ຯລຯ ທີ່ຊອກເຂົາຕະໂປທະກະ ຯລຯ ທີ່ຕະໂປທາຣາມ ຯລຯ ທີ່ຊີວະກຳພະວັນ ຯລຯ ທ່ານຈົ່ງຈັດແຈງເສນາສະນະ ໃຫ້ພວກຂ້ານ້ອຍທີ່ມັດທະກຸດສີມະຣຶຄະທາຍະວັນ"

ທ່ານພຣະທັບພະມັນລະບຸດເຂົ້າເຕໂຊກະສິນ ໃຊ້ອົງຄຸລີສ່ອງແສງສະຫວ່າງຍ່າງນຳໜ້າພິກຂຸເຫຼົ່ານັ້ນ ທ່ານເຫຼົ່ານັ້ນຍ່າງນຳພຣະທັບພະມັນລະບຸດໄປດ້ວຍແສງສະຫວ່າງນັ້ນ ທ່ານໄດ້ຈັດແຈງເສນາສະນະສຳລັບພິກຂຸເຫຼົ່ານັ້ນ ຊີ້ແຈງວ່າ "ນີ້ຕຽງ ນີ້ຕັ່ງ ນີ້ຟູກ ນີ້ໝອນ ນີ້ທີ່ຖ່າຍອຸດຈາຣະ ນີ້ທີ່ຖ່າຍປັດສາວະ ນີ້ນ້ຳສັນ ນີ້ນ້ຳໃຊ້ ນີ້ໄມ້ການເທົ້າ ນີ້ລະບຽບກະຕິກາສົງ ຄວນເຂົ້າເວລານີ້ ຄວນອອກເວລານີ້" ເມື່ອຈັດແຈງສຳເລັດແລ້ວຈຶ່ງກັບມາພຣະເວລຸວັນວິຫານຕາມເກົ່າ

**ເລື່ອງພຣະທັບພະມັນລະບຸດ ຈົບ**

## ເລື່ອງພຣະເມດຕິຍະແລະພຣະພຸມມະຊະກະ

[໓໗໓] ກໍສະໄໝນັ້ນ ພຣະເມດຕິຍະ ແລະ ພຣະພຸມມະຊະກະ ເປັນພຣະບວດໃໝ່ແລະມີບຸນໜ້ອຍ ເສນາສະນະຂອງສົງບໍ່ດີ ອາຫານກໍບໍ່ເປັນທີ່ພໍໃຈ ຕົກເຖິງທ່ານທັງສອງ ຊາວນະຄອນຣາຊະຄຶຕ້ອງການຈະຖວາຍບິນທະບາດແກ່ພຣະເຖຣະທັງຫຼາຍ ກໍຖວາຍເນີຍໄສແດ່ນ້ຳມັນແດ່ ແກງອ່ອມແດ່ ຈັດປຸງພິເສດ ແຕ່ພວກເຂົາຖວາຍອາຫານທຳມະດາ ແກ່ພຣະເມດຕິຍະ ແລະ ພຣະພຸມມະຊະກະ ຕາມແຕ່ຈະຫາໄດ້ ອັນມີເຂົ້າປຽນກັບນ້ຳສົ້ມຜັກ

ວັນໜຶ່ງ ທ່ານທັງສອງກັບຈາກບິນທະບາດຫຼັງຈາກສັນແລ້ວ ທ່ຽວຖາມພິກຂຸເຖຣະວ່າ "ມີອາຫານອັນໃດແດ່ ໃນໂຮງສັນສຳລັບພວກທ່ານ"

ພຣະເຖຣະບາງພວກຕອບວ່າ "ທ່ານທັງສອງ ພວກເຮົາມີເນີຍໄສ ນ້ຳມັນ ແກງອ່ອມ"

ພຣະເມດຕິຍະ ແລະ ພຣະພຸມມະຊະກະ ກ່າວວ່າ "ພວກຂ້ານ້ອຍບໍ່ມີອັນໃດເລີຍນອກຈາກອາຫານທຳມະດາ ຕາມແຕ່ຈະຫາໄດ້ ມີເຂົ້າປຽນກັບນ້ຳສົ້ມຜັກ"

ສະໄໝຕໍ່ມາ ຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີ ຖວາຍອາຫານແກ່ສົງວັນລະ ໔ ເທື່ອເປັນນິຕະຍະພັດ ຄະຫະບໍດີພ້ອມບຸດພັນລະຍາອັງຄາດຢູ່ໃກ້ ໆ ໃນໂຮງສັນ ຄົນອື່ນ ໆ ຖາມ

ເຖິງຄວາມຕ້ອງການເຂົ້າສຸກ ຖາມເຖິງຄວາມຕ້ອງການກັບເຂົ້າ ຖາມເຖິງຄວາມຕ້ອງການນ້ຳມັນ ຖາມເຖິງຄວາມຕ້ອງການແກງອ່ອມ

ວັນຕໍ່ມາ ທ່ານພຣະທັບພະມັນລະບຸດຜູ້ເປັນພັດຕຸດເທດນິມົນພຣະເມດຕິຍະ ແລະ ພຣະພຸມມະຊະກະໄປສັນພັດຕາຫານຂອງຄະຫະບໍດີໃນວັນຮຸ່ງຂຶ້ນໃນວັນດຽວກັນນັ້ນ ຄະຫະບໍດີເດີນທາງໄປ ອາຮາມດ້ວຍທຸລະບາງຢ່າງ ໄດ້ເຂົ້າໄປຫາທ່ານພຣະທັບພະມັນລະບຸດເຖິງສຳນັກ ເມື່ອເຖິງແລ້ວໄດ້ໄຫວ້ທ່ານພຣະທັບພະມັນລະບຸດແລ້ວນັ່ງລົງ ໃນທີ່ສົມຄວນ ທ່ານທັບພະມັນລະບຸດ ຊີ້ແຈ່ງຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີໃຫ້ເຫັນຊັດແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ເມື່ອແລ້ວ ຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີ ຖາມວ່າ "ພັດຕາຫານທີ່ຈະຖວາຍໃນມື້ອື່ນນີ້ຢູ່ເຮືອນຂອງຂ້ານ້ອຍ ທ່ານນິມົນພິກຂຸອົງໃດໄປສັນແດ່ນໍຂ້ານ້ອຍ?"

ທ່ານພຣະທັບພະມັນລະບຸດຕອບວ່າ "ອາດຕະມາຈັດໃຫ້ພຣະເມດຕິຍະ ແລະ ພຣະພຸມມະຊະກະໄປສັນ"

ເຂົາບໍ່ພໍໃຈ ແລ້ວຄິດວ່າ "ເປັນຫຍັງຈຶ່ງນິມົນພິກຂຸຊົ່ວໄປສັນພັດຕາຫານໃນເຮືອນເຮົາແນວນັ້ນນໍ" ກັບໄປເຮືອນແລ້ວສັ່ງແມ່ຍິງຮັບໃຊ້ວ່າ "ນາງ ມື້ອື່ນ ເຈົ້າຈົ່ງຈັດອາສະນະໄວ້ທີ່ຊຸ້ມປະຕູແລ້ວເອົາເຂົ້າປຽນກັບນ້ຳສົ້ມຜັກຖວາຍພິກຂຸຜູ້ມາສັນພັດຕາຫານເດີ້"

ແມ່ຍິງຮັບໃຊ້ຮັບຄຳວ່າ "ໄດ້ ຂ້ານ້ອຍ"

ວັນດຽວກັນນັ້ນ ພຣະເມດຕິຍະ ແລະ ພຣະພຸມມະຊະກະກ່າວກັນວ່າ "ທ່ານ ມື້ວານນີ້ເຮົາໄດ້ຮັບນິມົນໄປສັນພັດຕາຫານໃນເຮືອນຄະຫະບໍດີ ມື້ອື່ນ ຄະຫະບໍດີພ້ອມດ້ວຍບຸດພັນລະຍາກໍຈັກມາຢືນອັງຄາດເຮົາຢູ່ໃກ້ ໆ ຄົນອື່ນຖາມເຖິງຄວາມຕ້ອງການເຂົ້າສຸກ ຖາມເຖິງຄວາມຕ້ອງການກັບເຂົ້າ ຖາມເຖິງຄວາມຕ້ອງການນ້ຳມັນ ຖາມເຖິງຄວາມຕ້ອງການແກງອ່ອມ" ຍ້ອນຄວາມດີໃຈນັ້ນ ພໍຮອດກາງຄືນ ທ່ານທັງສອງຈຶ່ງນອນຫຼັບບໍ່ເຕັມອີ່ມ ເມື່ອເວລາເຊົ້າມາຮອດ ໄດ້ຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນຍ່າງໄປເຖິງນິເວດຂອງຄະຫະບໍດີ

ເມື່ອແມ່ຍິງຜູ້ຮັບໃຊ້ແນມເຫັນພຣະເມດຕິຍະ ແລະພຣະພຸມມະຊະກະຍ່າງມາແຕ່ໄກ ຈຶ່ງຈັດອາສະນະໄວ້ທີ່ຊຸ້ມປະຕູແລ້ວ ນິມົນວ່າ "ຄູບາ ນິມົນນັ່ງເທີ້ນ ຂ້ານ້ອຍ"

ພຣະເມດຕິຍະ ແລະ ພຣະພຸມມະຊະກະຄິດວ່າ "ເຂົາຄົງນິມົນໃຫ້ພວກເຮົານັ່ງຖ້າທີ່ຊຸ້ມປະຕູຈົນກວ່າພັດຕາຫານຈະສຳເລັດກ່ອນ" ຕໍ່ມາແມ່ຍິງຮັບໃຊ້ໄດ້ນຳເຂົ້າປຽນກັບນ້ຳສົ້ມຜັກໄປຖວາຍ ກ່າວວ່າ "ຄູບາ ນິມົນສັນ ຂ້ານ້ອຍ"

ທ່ານທັງສອງກ່າວວ່າ "ນາງ ພວກອາດຕະມາຮັບນິມົນມາສັນນິຕະຍະພັດ"

ແມ່ຍິງຮັບໃຊ້ຕອບວ່າ "ຂ້ານ້ອຍຮູ້ວ່າ ທ່ານເປັນພຣະຮັບນິມົນມາສັນນິຕະຍະພັດ ແຕ່ມື້ວານນີ້ ຄະຫະບໍດີໄດ້ສັ່ງໄວ້ວ່າ "ນາງ ມື້ອື່ນນີ້ ເຈົ້າຈົ່ງຈັດອາສະນະໄວ້ທີ່ຊຸ້ມປະຕູ ແລ້ວເອົາເຂົ້າປຽນກັບນໍ້າສົ້ມຜັກຖວາຍພິກຂຸຜູ້ມາສັນພັດຕາຫານເດີ້" ນິມົນສັນຕໍ່ເທີ້ນ ຂ້ານ້ອຍ"

ພຣະເມດຕິຍະ ແລະ ພຣະພຸມມະຊະກະ ປຶກສາກັນວ່າ "ມື້ວານນີ້ເອງ ຄະຫະບໍດີໄປຫາພຣະທັບພະມັນລະບຸດເຖິງອາຣາມ ສົງໄສພວກເຮົາຄົງຖືກພຣະທັບພະມັນລະບຸດທຳລາຍຕໍ່ໜ້າຄະຫະບໍດີແນ່ນອນ" ຍ້ອນຄວາມເສຍໃຈ ທ່ານທັງສອງຈຶ່ງສັນພັດຕາຫານບໍ່ໄດ້ສົມໃຈ ເມື່ອກັບຈາກບິນທະບາດຫຼັງຈາກສັນເສັດແລ້ວ ເຖິງອາຣາມ ເກັບບາດແລະຈີວອນແລ້ວ ໃຊ້ຜ້າສັງຄາຕິຮັດເຂົ່າ ນັ່ງຢູ່ນອກຊຸ້ມປະຕູອາຮາມ ນິ່ງຢູ່ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊຶບເຊົາ ບໍ່ເວົ້າຈາ

## ພິກຂຸນີເມດຕິຍາໃສ່ຄວາມພຣະທັບພະມັນລະບຸດ

ຄັ້ງນັ້ນ ພິກຂຸນີເມດຕິຍາເຂົ້າໄປຫາພຣະເມດຕິຍະ ແລະ ພຣະພຸມມະຊະກະເຖິງທີ່ພັກ ເມື່ອເຖິງແລ້ວໄດ້ກ່າວກັບພຣະເມດຕິຍະ ແລະ ພຣະພຸມມະຊະກະ ດັ່ງນີ້ວ່າ "ຄູບາ ຂ້ານ້ອຍຂໍໄຫວ້ ຂ້ານ້ອຍ"

ເມື່ອນາງກ່າວແນວນັ້ນ ພຣະເມດຕິຍະ ແລະ ພຸມມະສະກະກໍບໍ່ເວົ້ານຳ ນາງຈຶ່ງກ່າວວ່າ "ຂ້ານ້ອຍຂໍໄຫວ້ ຂ້ານ້ອຍ" ແມ່ນຄັ້ງທີ ໔ ໗ລ໗ ແມ່ນຄັ້ງທີ ៣ ພຣະເມດຕິຍະ ແລະພຣະພຸມມະຊະກະກໍບໍ່ຍອມເວົ້ານຳ

ພິກຂຸນີເມດຕິຍາກ່າວຕໍ່ໄປວ່າ "ຂ້ານ້ອຍ ເຮັດຜິດອັນໃດຕໍ່ຄູບາ ເປັນຫຍັງ ຄູບາຈຶ່ງບໍ່ຍອມເວົ້າກັບຂ້ານ້ອຍ"

ພິກຂຸທັງສອງຕອບວ່າ "ຈິງແນວນັ້ນແລ ນາງ ພວກເຮົາຖືກພຣະທັບພະມັນລະບຸດບຽດບຽນ ທ່ານຍັງເພີກເສີຍຢູ່ໄດ້"

ພິກຂຸນີເມດຕິຍາຖາມວ່າ "ຂ້ານ້ອຍຈະຊ່ອຍໄດ້ແນວໃດນໍ ຂ້ານ້ອຍ"

ພິກຂຸທັງສອງຕອບວ່າ "ຖ້າທ່ານເຕັມໃຈຊ່ອຍ ມື້ນີ້ ພຣະຜູ້ມີພຣະພາກເຈົ້າຕ້ອງໃຫ້ພຣະທັບພະມັນລະບຸດສິກ"

ພິກຂຸນີເມດຕິຍາຖາມວ່າ "ຄູບາ ຂ້ານ້ອຍຈະເຮັດແນວໃດ ຈະຊ່ອຍໄດ້ດ້ວຍວິທີໃດ?"

ພິກຂຸທັງສອງຕອບວ່າ "ມາເທີ້ນ ນາງ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ຈົ່ງຂາບທູນພຣະຜູ້ມີພຣະພາກເຈົ້າ ຢ່າງນີ້ວ່າ "ຂ້າແຕ່ພຣະອົງ ເລື້ອງນີ້ບໍ່ສົມຄວນ ບໍ່ ເໝາະສົມ ທິດທີ່ເຄີຍປອດໄພກໍກັບມີໄພ ທີ່ທີ່ບໍ່ເຄີຍມີສະໜຽດຈັງໄຮກໍກັບມີສະໜຽດຈັງໄຮ ທິດທີ່ບໍ່ເຄີຍມີອຸປັດທະວະກໍກັບມີອຸປັດທະວະ ໃນທີ່ທີ່ບໍ່ເຄີຍມີລົມກໍກັບມີລົມແຮງ ນໍ້າກໍເບິ່ງເປັນເໝືອນນໍ້າຮ້ອນຂຶ້ນມາ ຂ້ານ້ອຍຖືກພຣະທັບພະມັນລະບຸດຂົ່ມຂືນ"

ພິກຂຸນີເມດຕິຍາຮັບຄຳຂອງພຣະເມດຕິຍະ ແລະ ພຣະພຸມມະຊະກະແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວຢືນຢູ່ ໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ເລື້ອງນີ້ບໍ່ສົມຄວນ ໆລໆ ຂ້ານ້ອຍຖືກພຣະທັບພະມັນລະບຸດຂົ່ມຂືນ"

## ຊົງປະຊຸມສົງສອບຖາມ

[໓໗໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈຳໄດ້ບໍ່ວ່າໄດ້ເຮັດຕາມທີ່ພິກຂຸນີນີ້ກ່າວຫາ"

ທ່ານພຣະທັບພະມັນລະບຸດຂາບທູນວ່າ "ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮູ້ວ່າຂ້າພຣະອົງເປັນແນວໃດ?" ແມ່ນຄັ້ງທີ ໒ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະທັບພະມັນລະບຸດ ໆລໆ ແມ່ນຄັ້ງທີ ໓ ຕັດຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈຳໄດ້ບໍ່ວ່າໄດ້ເຮັດຕາມທີ່ພິກຂຸນີນີ້ກ່າວຫາ" ພຣະທັບພະມັນລະບຸດກໍຂາບທູນວ່າ "ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮູ້ວ່າ ຂ້າພຣະອົງເປັນແນວໃດ?"

"ທັບພະ ບັນດິດຍ່ອມບໍ່ແກ້ຄຳກ່າວຫາແນວນີ້ ຖ້າທ່ານເຮັດກໍຈົ່ງບອກວ່າເຮັດ ຖ້າທ່ານບໍ່ໄດ້ເຮັດ ກໍຈົ່ງບອກວ່າບໍ່ໄດ້ເຮັດ"

"ຂ້າແຕ່ພຣະອົງຜູ້ຈະເລີນ ຕັ້ງແຕ່ເກີດມາ ຂ້າພຣະອົງບໍ່ຮູ້ຈັກການເສບເມຖຸນທຳແມ່ນໃນຄວາມຝັນ ບໍ່ຕ້ອງເວົ້າຮອດເວລາຕື່ນຢູ່"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍຖ້າແນວນັ້ນ ທ່ານທັງຫຼາຍຈົ່ງໃຫ້ນາງພິກຂຸນີເມດຕິຍາສິກ ຈົ່ງສອບຖາມພິກຂຸເຫຼົ່ານີ້" ແລ້ວສະເດັດລຸກຈາກທີ່ປະທັບເຂົ້າພຣະວິຫານ

ຫຼັງຈາກນັ້ນ ພິກຂຸທັງຫຼາຍຈຶ່ງໃຫ້ນາງພິກຂຸນີເມດຕິຍາສິກ ແຕ່ພຣະເມດຕິຍະ ແລະພຣະພຸມມະສະກະກໍໄດ້ແຈ້ງພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍຢ່າໃຫ້ນາງພິກຂຸນີເມດຕິຍາສິກເລີຍນາງບໍ່ມີຄວາມຜິດ ພວກຂ້ານ້ອຍເອງໂກດ ບໍ່ພໍໃຈ ຕ້ອງການໃຫ້ພຣະທັບພະມັນລະບຸດພົ້ນຈາກພົມມະຈັນ ຈຶ່ງຊັກນຳບົງການນາງ"

ພິກຂຸທັງຫຼາຍກ່າວວ່າ "ທ່ານທັງຫຼາຍ ພວກທ່ານໃສ່ຄວາມພຣະທັບພະມັນລະບຸດ ດ້ວຍອາບັດປາຣາຊິກທີ່ບໍ່ມີມູນແມ່ນບໍ?"

## ພຣະເມດຕິຍະແລະພຣະພຸມມະຊະກະຍອມຮັບສາລະພາບ

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະເມດຕິຍະ ແລະ ພຣະພຸມມະຊະກະຈຶ່ງໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍອາບັດປາຣາ

ຊິກທີ່ບໍ່ມີມູນແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພຣະເມດຕິຍະ ແລະ ພຣະພຸມມະຊະກະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນແດ່ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະເມດຕິຍະ ແລະ ພຣະພຸມມະຊະກະວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ທ່ານທັງສອງໃສ່ຄວາມທັບພະມັນລະບຸດ ດ້ວຍອາບັດປາຣາຊິກທີ່ບໍ່ມີມູນແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານ ຈຶ່ງໃສ່ຄວາມທັບພະມັນລະບຸດດ້ວຍອາບັດປາຣາຊິກທີ່ບໍ່ມີມູນແນວນັ້ນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໓໗໘] **ກໍ ພິກຂຸໃດ ຂັດເຄືອງ ມີໂທສະ ບໍ່ແຊ່ມຊື່ນ ໃສ່ຄວາມພິກຂຸດ້ວຍ ອາບັດປາຣາຊິກທີ່ບໍ່ມີມູນ ໂດຍມຸ້ງໝາຍວ່າ "ເຮັດແນວໃດນໍ ຈຶ່ງຈະໃຫ້ພິກຂຸນັ້ນພົ້ນຈາກພົມມະຈັນນີ້ໄດ້" ເມື່ອສະໄໝຕໍ່ຈາກນັ້ນ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມ ບໍ່ໂຈດກໍຕາມ ອະທິກອນນັ້ນເປັນເລື້ອງບໍ່ມີມູນ ແລະພິກຂຸຍອມຮັບຜິດ ເປັນສັງຄາທິເສດ**

**ເລື້ອງພຣະເມດຕິຍະແລະພຣະພຸມມະຊະກະ ຈົບ**

## ສິກຂາບົດວິພັງ

[໓໗໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໝາຍເຖິງ ພິກຂຸອື່ນ

ຄຳວ່າ ຂັດເຄືອງ ມີໂທສະ ຄື ໂກດ ບໍ່ພໍໃຈ ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ບໍ່ແຊ່ມຊື່ນ ຄື ບໍ່ແຊ່ມຊື່ນຍ້ອນຄວາມໂກດນັ້ນ ຍ້ອນມີໂທສະນັ້ນ ຍ້ອນຄວາມບໍ່ພໍໃຈນັ້ນແລະຍ້ອນຄວາມແຫ້ງໃຈນັ້ນ

ຊື່ວ່າ ທີ່ບໍ່ມີມູນ ຄື ບໍ່ໄດ້ເຫັນ ບໍ່ໄດ້ຍິນ ບໍ່ໄດ້ຄິດສົງໄສ

ຄຳວ່າ ດ້ວຍອາບັດປາຣາຊິກ ຄື ດ້ວຍອາບັດປາຣາຊິກ ໔ ຂໍ້ ຂໍ້ໃດຂໍ້ໜຶ່ງ

ຄຳວ່າ ໃສ່ຄວາມ ໄດ້ແກ່ ໂຈດເອງ ຫຼື ສັ່ງໃຫ້ຜູ້ອື່ນໂຈດ

ຄຳວ່າ ເຮັດແນວໃດຈຶ່ງຈະໃຫ້ພິກຂຸນັ້ນພົ້ນຈາກພົມມະຈັນນີ້ໄດ້ ຄວາມວ່າ ໃຫ້ພົ້ນຈາກຄວາມເປັນພິກຂຸ ໃຫ້ພົ້ນຈາກສະມະນະທຳ ໃຫ້ພົ້ນຈາກສິນຂັນ ໃຫ້ພົ້ນຈາກຄຸນຄືຕະບະ

ຄຳວ່າ ເມື່ອສະໄໝຕໍ່ຈາກນັ້ນ ຄວາມວ່າ ລ່ວງຂະນະ ໄລຍະ ບຶດໜຶ່ງ ທີ່ພິກຂຸຖືກໃສ່ຄວາມໄປແລ້ວ

ຄຳວ່າ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມ ຄື ຈະມີຜູ້ເຊື່ອຖືຕາມເລື້ອງທີ່ເຮັດໃຫ້ພິກຂຸນັ້ນຖືກໃສ່ຄວາມກໍຕາມ

ຄຳວ່າ ບໍ່ໂຈດກໍຕາມ ຄື ບໍ່ມີຜູ້ໃດ ກ່າວເຖິງພິກຂຸນັ້ນ

ຊື່ວ່າ ອະທິກອນ ໄດ້ແກ່ ອະທິກອນ ໔ ຢ່າງ ຄື ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ແລະກິດຈາທິກອນ

ຄຳວ່າ ແລະພິກຂຸຍອມຮັບຜິດ ຄວາມວ່າ ພິກຂຸນັ້ນຍອມຮັບວ່າ "ຂ້າພະເຈົ້າເວົ້າຄຳຂາດປະໂຫຍດ ເວົ້າຕົວະ ເວົ້າບໍ່ຈິງ ບໍ່ຮູ້ຈຶ່ງເວົ້າ"

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ຯລຯ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ "ເປັນສັງຄາທິເສດ"

## ບົດພາຊະນີ

## ບໍ່ເຫັນ ໂຈດວ່າໄດ້ເຫັນ

[໓໙໗] ພິກຂຸຜູ້ໂຈດບໍ່ໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າເຫັນທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດ ທຸກໆ ຄຳເວົ້າ

## ບໍ່ໄດ້ຍິນ ໂຈດວ່າໄດ້ຍິນ

ພິກຂຸຜູ້ໂຈດບໍ່ໄດ້ຍິນວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ຄິດສົງໄສ ໂຈດວ່າຄິດສົງໄສ

ພິກຂຸຜູ້ໂຈດບໍ່ໄດ້ຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນ ວ່າ "ຂ້າພະເຈົ້າຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ເຫັນ ໂຈດວ່າໄດ້ເຫັນແລະໄດ້ຍິນ

ພິກຂຸຜູ້ໂຈດບໍ່ໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າເຫັນແລະໄດ້ຍິນວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ເຫັນ ໂຈດວ່າໄດ້ເຫັນແລະຄິດສົງໄສ

ພິກຂຸຜູ້ໂຈດບໍ່ໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນແລະຄິດສົງໄສວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດ ສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ເຫັນ ໂຈດວ່າໄດ້ເຫັນ ໄດ້ຍິນແລະຄິດສົງໄສ

ພິກຂຸຜູ້ໂຈດບໍ່ໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນ ໄດ້ຍິນ ແລະ ຄິດສົງໄສວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ໄດ້ຍິນ ໂຈດວ່າໄດ້ຍິນແລະຄິດສົງໄສ

ພິກຂຸຜູ້ໂຈດບໍ່ໄດ້ຍິນວ່າພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນ ແລະຄິດສົງໄສວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ໄດ້ຍິນ ໂຈດວ່າໄດ້ຍິນແລະໄດ້ເຫັນ

ພິກຂຸຜູ້ໂຈດບໍ່ໄດ້ຍິນວ່າພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າ ໄດ້ຍິນແລະໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ໄດ້ຍິນ ໂຈດວ່າໄດ້ຍິນ ຄິດສົງໄສແລະໄດ້ເຫັນ

ພິກຂຸຜູ້ໂຈດບໍ່ໄດ້ຍິນວ່າພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນ ຄິດສົງໄສ ແລະ ໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກໆ ຄຳເວົ້າ

## ບໍ່ຄິດສົງໄສ ໂຈດວ່າຄິດສົງໄສແລະໄດ້ເຫັນ

ພິກຂຸຜູ້ໂຈດບໍ່ໄດ້ຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າຄິດສົງໄສແລະໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກໆ ຄຳເວົ້າ

## ບໍ່ຄິດສົງໄສ ໂຈດວ່າຄິດສົງໄສແລະໄດ້ຍິນ

ພິກຂຸຜູ້ໂຈດບໍ່ໄດ້ຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າຄິດສົງໄສ ແລະ ໄດ້ຍິນວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກໆ ຄຳເວົ້າ

## ບໍ່ຄິດສົງໄສ ໂຈດວ່າຄິດສົງໄສ ໄດ້ເຫັນແລະໄດ້ຍິນ

ພິກຂຸຜູ້ໂຈດບໍ່ໄດ້ຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າຄິດສົງໄສ ໄດ້ເຫັນແລະໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ໄດ້ເຫັນ ໂຈດວ່າໄດ້ຍິນ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ໄດ້ເຫັນ ໂຈດວ່າຄິດສົງໄສ ຯລຯ ໄດ້ຍິນແລະຄິດສົງໄສ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າ ຄິດສົງໄສວ່າທ່ານຕ້ອງອາບັດປາຣາຊິກ ຯລຯ" ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນ ແລະຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

ໄດ້ຍິນ ໂຈດວ່າຄິດສົງໄສ ຯລຯ ໄດ້ເຫັນ ຯລຯ ຄິດສົງໄສແລະໄດ້ເຫັນ

ພິກຂຸຜູ້ໂຈດໄດ້ຍິນວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າ ຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າຄິດສົງໄສແລະໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ຄິດສົງໄສ ໂຈດວ່າໄດ້ເຫັນ ຯລຯ ໄດ້ຍິນ ຯລຯ ໄດ້ເຫັນແລະໄດ້ຍິນ

ພິກຂຸຜູ້ໂຈດຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າ ໄດ້ເຫັນທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນວ່າທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນແລະໄດ້ຍິນວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ໄດ້ເຫັນ ບໍ່ແນ່ໃຈ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ບໍ່ແນ່ໃຈໃນເລື້ອງທີ່ໄດ້ເຫັນ ຄື ກຳນົດສິ່ງທີ່ໄດ້ເຫັນບໍ່ໄດ້ ຈຳສິ່ງທີ່ໄດ້ເຫັນບໍ່ໄດ້ ລືມສິ່ງທີ່ໄດ້ເຫັນ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນ ແລະໄດ້ຍິນ ຯລຯ ຂ້າພະເຈົ້າໄດ້ເຫັນ ແລະ ຄິດສົງໄສ ຯລຯ ຂ້າພະເຈົ້າໄດ້ເຫັນ ໄດ້ຍິນແລະຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກ ຯລຯ"

## ໄດ້ຍິນ ບໍ່ແນ່ໃຈ

ພິກຂຸຜູ້ໂຈດໄດ້ຍິນວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ບໍ່ແນ່ໃຈໃນເລື້ອງທີ່ໄດ້ຍິນ ຄືກຳນົດເລື້ອງທີ່ໄດ້ຍິນບໍ່ໄດ້ ຈຳເລື້ອງທີ່ໄດ້ຍິນບໍ່ໄດ້ ລືມເລື້ອງທີ່ໄດ້ຍິນ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນແລະຄິດສົງໄສ ຯລຯ ຂ້າພະເຈົ້າໄດ້ຍິນແລະໄດ້ເຫັນ ຯລຯ ຂ້າພະເຈົ້າໄດ້ຍິນຄິດສົງໄສແລະໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ"

## ຄິດສົງໄສ ບໍ່ແນ່ໃຈ

ພິກຂຸຜູ້ໂຈດຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ບໍ່ແນ່ໃຈໃນເລື້ອງທີ່ຄິດສົງໄສ ຄືກຳນົດເລື້ອງທີ່ຄິດສົງໄສບໍ່ໄດ້ ຈຳເລື້ອງທີ່ຄິດສົງໄສບໍ່ໄດ້ ລືມເລື້ອງທີ່ຄິດສົງໄສ ຖ້າໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າຄິດສົງໄສແລະເຫັນ ຯລຯ ຂ້າພະເຈົ້າຄິດສົງໄສແລະໄດ້ຍິນ ຯລຯ ຂ້າພະເຈົ້າຄິດສົງໄສ ໄດ້ເຫັນແລະໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດ ທຸກໆ ຄຳເວົ້າ

## ບໍ່ເຫັນ ສັ່ງໃຫ້ໂຈດວ່າເຫັນ

[໓໘໘] ພິກຂຸຜູ້ໂຈດບໍ່ໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາ

ກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາຫຼືສັງຄະກຳບໍ່ໄດ້” ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ໄດ້ຍິນ ສັ່ງໃຫ້ໂຈດວ່າໄດ້ຍິນ

ພິກຂຸຜູ້ໂຈດບໍ່ໄດ້ຍິນວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ “ຂ້າພະເຈົ້າໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ” ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ບໍ່ໄດ້ຄິດສົງໄສ ສັ່ງໃຫ້ໂຈດວ່າໄດ້ສົງໄສ

ພິກຂຸຜູ້ໂຈດບໍ່ໄດ້ຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ “ຂ້າພະເຈົ້າຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ” ຕ້ອງອາບັດສັງຄາທິເສດທຸກໆ ຄຳເວົ້າ

## ບໍ່ໄດ້ເຫັນ ສັ່ງໃຫ້ໂຈດວ່າໄດ້ເຫັນ ຯລຯ

ພິກຂຸຜູ້ໂຈດບໍ່ໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ “ຂ້າພະເຈົ້າ ໄດ້ເຫັນ ໄດ້ຍິນ ຯລຯ ຂ້າພະເຈົ້າໄດ້ເຫັນ ໄດ້ຄິດສົງໄສ ຯລຯ ຂ້າພະເຈົ້າໄດ້ເຫັນ ໄດ້ຍິນ ໄດ້ຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ” ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ບໍ່ໄດ້ຍິນ ສັ່ງໃຫ້ໂຈດວ່າໄດ້ຍິນ ຯລຯ

ພິກຂຸຜູ້ໂຈດບໍ່ໄດ້ຍິນວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ “ຂ້າພະເຈົ້າໄດ້ຍິນ ໄດ້ຄິດສົງໄສ ຯລຯ ຂ້າພະເຈົ້າໄດ້ຍິນ ໄດ້ເຫັນ ຯລຯ ຂ້າພະເຈົ້າໄດ້ຍິນ ໄດ້ຄິດສົງໄສ ໄດ້ເຫັນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ” ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ບໍ່ຄິດສົງໄສ ສັ່ງໃຫ້ໂຈດວ່າໄດ້ຄິດສົງໄສ ຯລຯ

ພິກຂຸຜູ້ໂຈດບໍ່ໄດ້ຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ “ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ເຫັນ ຯລຯ ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ຍິນ ຯລຯ ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ເຫັນໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ” ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ໄດ້ເຫັນ ສັ່ງໃຫ້ໂຈດວ່າໄດ້ຍິນ ຯລຯ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ ຂ້າພະເຈົ້າໄດ້ຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ ຂ້າພະເຈົ້າໄດ້ຍິນ ໄດ້ຄິດສົງໄສວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ໄດ້ຍິນ ສັ່ງໃຫ້ໂຈດວ່າຄິດສົງໄສ ຯລຯ

ພິກຂຸຜູ້ໂຈດໄດ້ຍິນວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຄິດສົງໄສ ຯລຯ" ຖ້າສັ່ງໃຫ້ໂຈດວ່າ "ຂ້າພະເຈົ້າໄດ້ເຫັນ ຯລຯ" ຖ້າສັ່ງໃຫ້ໂຈດວ່າ "ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ຄິດສົງໄສ ສັ່ງໃຫ້ໂຈດວ່າໄດ້ເຫັນ ຯລຯ

ພິກຂຸຜູ້ໂຈດຄິດສົງໄສວ່າ ພິກຂຸຕ້ອງອາບັດປາຣາຊິກແລ້ວ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຍິນ ຯລຯ" ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ເຫັນ ໄດ້ຍິນວ່າ ທ່ານຕ້ອງອາບັດປາຣາຊິກແລ້ວ ຯລຯ" ຕ້ອງອາບັດສັງຄາທິເສດ ທຸກໆ ຄຳເວົ້າ

## ໄດ້ເຫັນ ບໍ່ແນ່ໃຈ ສັ່ງໃຫ້ໂຈດ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຣາຊິກ ບໍ່ແນ່ໃຈໃນເລື້ອງທີ່ໄດ້ເຫັນ ຄື ກຳນົດສິ່ງທີ່ໄດ້ເຫັນບໍ່ໄດ້ ຈຳສິ່ງທີ່ໄດ້ເຫັນບໍ່ໄດ້ ລືມສິ່ງທີ່ໄດ້ເຫັນ ຯລຯ

## ໄດ້ຍິນ ບໍ່ແນ່ໃຈ ສັ່ງໃຫ້ໂຈດ

ພິກຂຸຜູ້ໂຈດບໍ່ແນ່ໃຈໃນເລື້ອງທີ່ໄດ້ຍິນ ຄື ກຳນົດເລື້ອງທີ່ໄດ້ຍິນບໍ່ໄດ້ ຈຳເລື້ອງທີ່ໄດ້ຍິນບໍ່ໄດ້ ລືມເລື້ອງທີ່ໄດ້ຍິນ ຯລຯ

## ບໍ່ແນ່ໃຈ ຄິດສົງໄສ ສັ່ງໃຫ້ໂຈດ

ພິກຂຸຜູ້ໂຈດບໍ່ແນ່ໃຈໃນເລື້ອງທີ່ຄິດສົງໄສ ຄື ກຳນົດເລື້ອງທີ່ຄິດສົງໄສບໍ່ໄດ້ ຈຳເລື້ອງທີ່ຄິດສົງໄສບໍ່ໄດ້ ລືມເລື້ອງທີ່ຄິດສົງໄສ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ເຫັນ ຯລຯ" ລືມເລື້ອງທີ່ຄິດສົງໄສ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ຍິນ

๗๒๗" ລືມເລື້ອງທີ່ຄິດສົງໄສ ຖ້າສັ່ງໃຫ້ໂຈດພິກຂຸນັ້ນວ່າ "ຂ້າພະເຈົ້າໄດ້ຄິດສົງໄສ ໄດ້ເຫັນ ໄດ້ຍິນວ່າທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

## ຄວາມເຫັນ ໔ ຢ່າງ

[៣๒๘] ຈຳເລີຍບໍ່ບໍລິສຸດ ໂຈດມີຄວາມເຫັນວ່າເປັນຜູ້ບໍລິສຸດ ໑ ຈຳເລີຍບໍລິສຸດ ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ໑ ຈຳເລີຍບໍ່ບໍລິສຸດ ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ໑ ຈຳເລີຍບໍລິສຸດ ໂຈດມີຄວາມເຫັນວ່າເປັນຜູ້ບໍລິສຸດ ໑

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດສັງຄາທິເສດ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດ ພິກຂຸນັ້ນ ຕ້ອງອາບັດທຸກກົດກັບອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ບໍ່ຕ້ອງອາບັດ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດກັບອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ບໍ່ຕ້ອງອາບັດ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດກັບອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງແລ້ວ ຍ່ອມເປັນຜູ້ບໍ່ບໍລິສຸດ ຖ້າພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດ ພິກຂຸນັ້ນ ຕ້ອງອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດ ມີຄວາມເຫັນວ່າເປັນຜູ້ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດກັບອາບັດສັງຄາທິເສດ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດ ມີຄວາມເຫັນວ່າເປັນຜູ້ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດສັງຄາທິເສດ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດ ມີຄວາມເຫັນວ່າເປັນຜູ້ບໍລິສຸດ ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດທຸກກົດກັບອາບັດປາຈິດຕີ ຍ້ອນກ່າວສຽດສີ

ພິກຂຸບໍ່ຕ້ອງອາບັດປາຣາຊິກຂໍ້ໃດຂໍ້ໜຶ່ງ ຍ່ອມເປັນຜູ້ບໍລິສຸດ ຖ້າພິກຂຸຜູ້ໂຈດ ມີຄວາມເຫັນວ່າເປັນຜູ້ບໍລິສຸດ ຂໍໂອກາດກ່ອນ ມີຄວາມປະສົງຈະດ່າຈຶ່ງໂຈດພິກຂຸນັ້ນ ຕ້ອງອາບັດປາຈິດຕີ ຍ້ອນກ່າວສຽດສີ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໕໐] ໑. ພິກຂຸຈໍາເລີຍເປັນຜູ້ບໍລິສຸດ ພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ
໔. ພິກຂຸຈໍາເລີຍເປັນຜູ້ບໍ່ບໍລິສຸດ ພິກຂຸຜູ້ໂຈດມີຄວາມເຫັນວ່າເປັນຜູ້ບໍ່ບໍລິສຸດ
໓. ພິກຂຸວິກົນຈະລິດ
໔. ພິກຂຸຕົ້ນບັນຍັດ

**ປະຖົມທຸດຖະໂທສະສິກຂາບົດທີ ๗ ຈົບ**

# ໗. ທຸຕິຍະທຸດຖະໂທສະສິກຂາບົດ

## ວ່າດ້ວຍພິກຂຸຂັດເຄືອງມີໂທສະ ສິກຂາບົດທີ ໘

### ເລື້ອງພຣະເມດຕິຍະແລະພຣະພຸມມະຊະກະ

[໓໗໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພຣະເມດຕິຍະ ແລະ ພຣະພຸມມະຊະກະກຳລັງລົງຈາກພູເຂົາຄິດຊະກູດ ແນມເຫັນແບ້ໂຕຜູ້ກັບໂຕແມ່ກຳລັງສືບພັນກັນ ຈຶ່ງກ່າວວ່າ "ຖ້າຈັ່ງຊັ້ນ ພວກເຮົາຈະສົມມຸດແບ້ໂຕຜູ້ເປັນພຣະທັບພະມັນລະບຸດ ສົມມຸດແບ້ໂຕແມ່ເປັນພິກຂຸນີເມດຕິຍາ ຈັກກ່າວວ່າ "ຄັ້ງກ່ອນພວກເຮົາກ່າວຫາພຣະທັບພະມັນລະບຸດ ດ້ວຍໄດ້ຍິນມາ ແຕ່ບັດນີ້ພວກເຮົາໄດ້ເຫັນພຣະທັບພະມັນລະບຸດເສບເມຖຸນກັບພິກຂຸນີເມດຕິຍາ ດ້ວຍຕົນເອງ" ທ່ານທັງສອງໄດ້ສົມມຸດພຣະທັບພະມັນລະບຸດເປັນແບ້ໂຕຜູ້ ສົມມຸດພິກຂຸນີເມດຕິຍາເປັນແບ້ໂຕແມ່ ແລ້ວແຈ້ງໃຫ້ພິກຂຸທັງຫຼາຍຮູ້ວ່າ "ຄັ້ງກ່ອນ ຯລຯ ແຕ່ບັດນີ້ ພວກເຮົາໄດ້ເຫັນພຣະທັບພະມັນລະບຸດເສບເມຖຸນກັບພິກຂຸນີເມດຕິຍາ ດ້ວຍຕົນເອງ"

ພິກຂຸທັງຫຼາຍກ່າວແນວນີ້ວ່າ "ທ່ານທັງຫຼາຍ ພວກທ່ານຢ່າກ່າວແນວນີ້ ທ່ານພຣະທັບພະມັນລະບຸດຈະບໍ່ເຮັດກຳເຊັ່ນນັ້ນ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈຳໄດ້ບໍ່ວ່າເຄີຍເຮັດຕາມທີ່ພິກຂຸເຫຼົ່ານີ້ກ່າວຫາ"

ທ່ານພຣະທັບພະມັນລະບຸດຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະອົງຍ່ອມຊົງຮູ້ວ່າຂ້າພຣະອົງເປັນແນວໃດ?" ແມ່ນຄັ້ງທີ ໒ ພຣະຜູ້ມີພຣະພາກເຈົ້າຕັດຖາມທ່ານພຣະທັບພະມັນລະບຸດ ຯລຯ ແມ່ນຄັ້ງທີ ໓ ຕັດຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈຳໄດ້ບໍ່ວ່າໄດ້ເຮັດຕາມທີ່ພິກຂຸເຫຼົ່ານີ້ກ່າວຫາ" ພຣະທັບພະມັນລະບຸດຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະອົງຍ່ອມຊົງຮູ້ວ່າ ຂ້າພຣະອົງເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທັບພະ ບັນດິດຍ່ອມບໍ່ແກ້ຄຳກ່າວຫາແນວນີ້ ຖ້າທ່ານເຮັດກໍຈົ່ງບອກວ່າເຮັດ ຖ້າທ່ານບໍ່ໄດ້ເຮັດ ກໍຈົ່ງບອກວ່າບໍ່ໄດ້ເຮັດ"

ທ່ານພຣະທັບພະມັນລະບຸດຂາບທູນວ່າ "ຂ້າແຕ່ພຣະອົງຈະເລີນ ຕັ້ງແຕ່ເກີດມາຂ້າພຣະອົງ ບໍ່ຮູ້ຈັກການເສບເມຖຸນແມ່ນໃນຄວາມຝັນ ບໍ່ຕ້ອງເວົ້າຮອດເວລາຕື່ນຢູ່"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ຖ້າແນວນັ້ນ ທ່ານທັງຫຼາຍຈົ່ງສອບຖາມພິກຂຸເຫຼົ່ານັ້ນ” ແລ້ວສະເດັດຈາກທີ່ປະທັບເຂົ້າໄປໃນພຣະວິຫານ

ຫຼັງຈາກນັ້ນ ພິກຂຸທັງຫຼາຍສອບຖາມພຣະເມດຕິຍະ ແລະ ພຣະພຸມມະຊະກະ ເມື່ອຖືກສອບຖາມຈຶ່ງໄດ້ຮັບສາລະພາບເລື້ອງນັ້ນ

ພິກຂຸທັງຫຼາຍຖາມວ່າ “ພວກທ່ານອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນອຸບາຍ ໃສ່ຄວາມພຣະທັບພະມັນລະບຸດດ້ວຍອາບັດປາຣາຊິກແມ່ນບໍ?”

ທ່ານທັງສອງຍອມຮັບ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພຣະເມດຕິຍະ ແລະ ພຣະກຸມມະຊະກະ ຈຶ່ງອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນອຸບາຍໃສ່ຄວາມພຣະທັບພະມັນລະບຸດດ້ວຍອາບັດປາຣາຊິກແນວນີ້ນໍ” ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານທັງສອງໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະເມດຕິຍະ ແລະ ພຣະພຸມມະຊະກະວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກທ່ານອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນອຸບາຍໃສ່ຄວາມທັບພະມັນລະບຸດດ້ວຍອາບັດປາຣາຊິກແມ່ນບໍ?” ພວກທ່ານທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ “ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນອຸບາຍໃສ່ຄວາມທັບພະມັນລະບຸດດ້ວຍອາບັດປາຣາຊິກແນວນັ້ນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ແລ້ວຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[๓๗๘] **ກໍ ພິກຂຸໃດ ຂັດເຄືອງ ມີໂທສະ ບໍ່ແຊ່ມຊື່ນ ອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນອຸບາຍໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກ ໂດຍມຸ້ງໝາຍວ່າ “ເຮັດແນວໃດ ຈຶ່ງຈະໃຫ້ພິກຂຸນັ້ນພົ້ນຈາກພົມມະຈັນນີ້ໄດ້” ເມື່ອສະໄໝຕໍ່ຈາກນັ້ນ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມ ບໍ່ໂຈດກໍຕາມ ອະທິກອນນັ້ນເປັນອະທິກອນເລື້ອງອື່ນ ອ້າງເອົາບາງສ່ວນເປັນອຸບາຍ ແລະພິກຂຸຍອມຮັບຜິດ ເປັນສັງຄາທິເສດ**

**ເລື້ອງພຣະເມດຕິຍະແລະພຣະພຸມມະຊະກະ ຈົບ**

## ສິກຂາບົດວິພັງ

[໓໙໓] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໝາຍເຖິງ ພິກຂຸອື່ນ

ຄຳວ່າ ຂັດເຄືອງ ມີໂທສະ ຄື ໂກດ ບໍ່ພໍໃຈ ບໍ່ຖືກໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ບໍ່ແຊ່ມຊື່ນ ຄື ບໍ່ແຊ່ມຊື່ນຍ້ອນຄວາມໂກດນັ້ນ ຍ້ອນມີໂທສະນັ້ນ ຍ້ອນບໍ່ພໍໃຈນັ້ນ ແລະຍ້ອນບໍ່ຖືກໃຈນັ້ນ

ຄຳວ່າ ແຫ່ງອະທິກອນເລື້ອງອື່ນ ຄື ເປັນອາບັດສ່ວນອື່ນ ຫຼື ເປັນອະທິກອນສ່ວນອື່ນ

## ອະທິກອນທີ່ຊື່ວ່າເປັນເລື້ອງອື່ນຈາກອະທິກອນ

ອະທິກອນຊື່ວ່າເປັນເລື້ອງອື່ນຈາກອະທິກອນເປັນແນວໃດ?

໑. ວິວາທາທິກອນ ເປັນເລື້ອງອື່ນຈາກອະນຸວາທາທິກອນ ອາປັດຕາທິກອນ ແລະກິດຈາທິກອນ
໒. ອະນຸວາທາທິກອນ ເປັນເລື້ອງອື່ນຈາກອາປັດຕາທິກອນ ກິດຈາທິກອນ ແລະວິວາທາທິກອນ
໓. ອາປັດຕາທິກອນ ເປັນເລື້ອງອື່ນຈາກກິດຈາທິກອນ ວິວາທາທິກອນ ແລະ ອະນຸວາທາທິກອນ
໔. ກິດຈາທິກອນ ເປັນເລື້ອງອື່ນຈາກວິວາທາທິກອນ ອະນຸວາທາທິກອນ ແລະ ອາປັດຕາທິກອນ

ອະທິກອນຊື່ວ່າເປັນເລື້ອງອື່ນຈາກອະທິກອນເປັນແນວນີ້

## ອະທິກອນຊື່ວ່າເປັນເລື້ອງດຽວກັບອະທິກອນ

ອະທິກອນຊື່ວ່າເປັນເລື້ອງດຽວກັບອະທິກອນເປັນແນວໃດ?

໑. ວິວາທາທິກອນ ເປັນເລື້ອງດຽວກັບວິວາທາທິກອນ
໒. ອະນຸວາທາທິກອນ ເປັນເລື້ອງດຽວກັບອະນຸວາທາທິກອນ
໓. ອາປັດຕາທິກອນ ເປັນເລື້ອງດຽວກັບອາປັດຕາທິກອນກໍມີ ເປັນເລື້ອງອື່ນຈາກ ອາປັດຕາທິກອນກໍມີ

## ອາປັດຕາທິກອນຊື່ວ່າເປັນເລື້ອງອື່ນຈາກອາປັດຕາທິກອນ

ອາປັດຕາທິກອນຊື່ວ່າເປັນເລື້ອງອື່ນຈາກອາປັດຕາທິກອນເປັນແນວໃດ?

໑. ເມຖຸນທຳປາຣາຊິກາບັດ ເປັນເລື້ອງອື່ນຈາກອະທິນນາທານປາຣາຊິກາບັດ ມະນຸດສະວິກຄະຫະປາຣາຊິກາບັດ ແລະອຸດຕະຣິມະນຸດສະທຳປາຣາຊິກາບັດ

໒. ອະທິນນາທານປາຣາຊິກາບັດ ເປັນເລື້ອງອື່ນຈາກມະນຸດສະວິກຄະຫະປາຣາຊິກາບັດ ອຸດຕະຣິມະນຸດສະທຳປາຣາຊິກາບັດ ແລະເມຖຸນທຳປາຣາຊິກາບັດ

໓. ມະນຸດສະວິກຄະຫະປາຣາຊິກາບັດ ເປັນເລື້ອງອື່ນຈາກອຸດຕະຣິມະນຸດສະທຳປາຣາຊິກາບັດ ເມຖຸນທຳປາຣາຊິກາບັດ ແລະ ອະທິນນາທານປາຣາຊິກາບັດ

໔. ອຸດຕະຣິມະນຸດສະທຳປາຣາຊິກາບັດ ເປັນເລື້ອງອື່ນຈາກເມຖຸນທຳປາຣາຊິກາບັດ ອະທິນນາທານປາຣາຊິກາບັດ ແລະມະນຸດສະວິກຄະຫະປາຣາຊິກາບັດ

ອາປັດຕາທິກອນຊື່ວ່າເປັນເລື້ອງອື່ນຈາກອາປັດຕາທິກອນເປັນແນວນີ້

## ອາປັດຕາທິກອນຊື່ວ່າເປັນເລື້ອງດຽວກັບອາປັດຕາທິກອນ

ອາປັດຕາທິກອນຊື່ວ່າເປັນເລື້ອງດຽວກັບອາປັດຕາທິກອນເປັນແນວໃດ?

໑. ເມຖຸນທຳປາຣາຊິກາບັດ ເປັນເລື້ອງດຽວກັບເມຖຸນທຳປາຣາຊິກາບັດ

໒. ອະທິນນາທານປາຣາຊິກາບັດ ເປັນເລື້ອງດຽວກັບອະທິນນາທານປາຣາຊິກາບັດ

໓. ມະນຸດສະວິກຄະຫະປາຣາຊິກາບັດ ເປັນເລື້ອງດຽວກັນກັບມະນຸດສະວິກຄະຫະປາຣາຊິກາບັດ

໔. ອຸດຕະຣິມະນຸດສະທຳປາຣາຊິກາບັດ ເປັນເລື້ອງດຽວກັບອຸດຕະຣິມະນຸດສະທຳ ປາຣາຊິກາບັດ

ອາປັດຕາທິກອນຊື່ວ່າເປັນເລື້ອງດຽວກັບອາປັດຕາທິກອນເປັນແນວນີ້?

## ກິດຈາທິກອນເປັນເລື້ອງດຽວກັບກິດຈາທິກອນ

ອະທິກອນຊື່ວ່າເປັນເລື້ອງດຽວກັບອະທິກອນເປັນແນວນີ້

## ອຸບາຍ ໑໐ ຢ່າງ

[໓໔໔] ຊື່ວ່າ ອຸບາຍ ໃນຄຳວ່າ ອ້າງເອົາບາງສ່ວນ ຯລຯ ເປັນອຸບາຍ ອະທິບາຍວ່າ ອຸບາຍມີ ໑໐ ຢ່າງໄດ້ແກ່ ອຸບາຍຄືຊາດກຳເນີດ ໑ ອຸບາຍຄືຊື່ ໑ ອຸບາຍຄືຕະກູນ ໑ ອຸບາຍຄືຮູບລັກສະນະ ໑ ອຸບາຍຄືອາບັດ ໑ ອຸບາຍຄືບາດ ໑ ອຸບາຍຄືຈີວອນ ໑ ອຸບາຍຄືພຣະອຸປັດຊາ ໑ ອຸບາຍຄືພຣະອາຈານ ໑ ອຸບາຍຄືເສນາສະນະ ໑

## ອະທິບາຍອຸບາຍ ໑໐ ຢ່າງ

[໓໔໕] ຊື່ວ່າ ອຸບາຍຄືຊາດກຳເນີດ ອະທິບາຍວ່າ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຜູ້ເປັນວັນນະກະສັດ ຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງຜູ້ເປັນວັນນະກະສັດຈຶ່ງໂຈດວ່າ "ຂ້າພະເຈົ້າເຫັນພິກຂຸຜູ້ເປັນວັນນະກະສັດຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຜູ້ເປັນວັນນະພາມ ຯລຯ ເຫັນພິກຂຸຜູ້ເປັນວັນນະແພດ ຯລຯ ເຫັນພິກຂຸຜູ້ເປັນວັນນະສູດຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງຜູ້ເປັນວັນນະສູດຈຶ່ງໂຈດວ່າ "ຂ້າພະເຈົ້າເຫັນພິກຂຸຜູ້ເປັນວັນນະສູດຕ້ອງອາບັດປາຣາຊິກ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ" ຕ້ອງອາບັດສັງຄາທິເສດທຸກ ໆ ຄຳເວົ້າ

[໓໔໖] ຊື່ວ່າ ອຸບາຍຄືຊື່ ອະທິບາຍວ່າ ພິກຂຸຜູ້ໂຈດໄດ້ເຫັນພຣະພຸດທະຣັກຂິຕະ ຯລຯ ໄດ້ເຫັນພຣະທຳມະຣັກຂິຕະ ຯລຯ ໄດ້ເຫັນພຣະສັງຄະຣັກຂິຕະຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງຜູ້ຊື່ວ່າສັງຄະຣັກຂິຕະຈຶ່ງໂຈດວ່າ "ຂ້າພະເຈົ້າເຫັນພຣະສັງຄະຣັກຂິຕະຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ" ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[໓໔໗] ຊື່ວ່າ ອຸບາຍຄືຕະກູນ ອະທິບາຍວ່າ ພິກຂຸຜູ້ໂຈດ ໄດ້ເຫັນພິກຂຸໃນຕະກູນໂຄຕະມະ ຯລຯ ໄດ້ເຫັນພິກຂຸໃນຕະກູນໂມກຄັນລານະ ຯລຯ ໄດ້ເຫັນພິກຂຸໃນຕະກູນກັດຈາຍະນະ ຯລຯ ໄດ້ເຫັນພິກຂຸໃນຕະກູນວາສິດຖະຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງໃນຕະກູນວາສິດຖະຈຶ່ງໂຈດວ່າ ຂ້າພະເຈົ້າເຫັນພິກຂຸໃນຕະກູນວາສິດຖະຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[໓໔໘] ຊື່ວ່າ ອຸບາຍຄືຮູບລັກສະນະ ອະທິບາຍວ່າ ພິກຂຸຜູ້ໂຈດ ໄດ້ເຫັນພິກຂຸສູງ ຯລຯ ໄດ້ເຫັນພິກຂຸຕ່ຳ ຯລຯ ໄດ້ເຫັນພິກຂຸຜິວດຳ ຯລຯ ໄດ້ເຫັນພິກຂຸຜິວຂາວຕ້ອງປາຣາຊິກ ເມື່ອ

ເຫັນພິກຂຸອີກອົງໜຶ່ງຜູ້ມີຜິວຂາວຈຶ່ງໂຈດວ່າ "ຂ້າພະເຈົ້າເຫັນພິກຂຸຜິວຂາວຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ" ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[๓๙๙] ຊື່ວ່າ ອຸບາຍຄືອາບັດ ອະທິບາຍວ່າ ພິກຂຸຜູ້ໂຈດ ເຫັນພິກຂຸຕ້ອງອາບັດເບົາ ຖ້າໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ ຂ້າພະເຈົ້າເຫັນທ່ານຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ ຕ້ອງອາບັດສັງຄາທິເສດ ທຸກໆ ຄຳເວົ້າ

[໔໐໐] ຊື່ວ່າ ອຸບາຍຄືບາດ ອະທິບາຍວ່າ ພິກຂຸຜູ້ໂຈດໄດ້ເຫັນພິກຂຸໃຊ້ບາດໂລຫະ ຯລຯ ໄດ້ເຫັນພິກຂຸໃຊ້ບາດດິນໜຽວ ຯລຯ ໄດ້ເຫັນພິກຂຸໃຊ້ບາດເຄືອບ ຯລຯ ໄດ້ເຫັນພິກຂຸໃຊ້ບາດດິນທຳມະດາ ຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງໃຊ້ບາດດິນທຳມະດາ ຈຶ່ງໂຈດວ່າ ຂ້າພະເຈົ້າເຫັນພິກຂຸໃຊ້ບາດດິນທຳມະດາຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[໔໐໑] ຊື່ວ່າ ອຸບາຍຄືຈີວອນ ອະທິບາຍວ່າ ພິກຂຸຜູ້ໂຈດ ໄດ້ເຫັນພິກຂຸຜູ້ໃຊ້ຜ້າບັງສຸກຸນ ຯລຯ ເຫັນພິກຂຸຜູ້ໃຊ້ຜ້າຄະຫະບໍດີ ຕ້ອງອາບັດປາຣາຊິກ ເມື່ອໄດ້ເຫັນພິກຂຸອີກອົງໜຶ່ງຜູ້ໃຊ້ຜ້າຄະຫະບໍດີຈຶ່ງໂຈດວ່າ ຂ້າພະເຈົ້າໄດ້ເຫັນພິກຂຸຜູ້ໃຊ້ຜ້າຂອງຄະຫະບໍດີຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[໔໐໒] ຊື່ວ່າ ອຸບາຍຄືພຣະອຸປັດຊາ ອະທິບາຍວ່າ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຜູ້ເປັນສັດທິວິຫາຣິກຂອງພຣະອຸປັດຊາຊື່ນີ້ ຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງຜູ້ເປັນສັດທິວິຫາຣິກຂອງພຣະອຸປັດຊາຊື່ນີ້ຈຶ່ງໂຈດວ່າ ຂ້າພະເຈົ້າເຫັນພິກຂຸຜູ້ເປັນສັດທິວິຫາຣິກຂອງພຣະອຸປັດຊາຊື່ນີ້ຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[໔໐໓] ຊື່ວ່າ ອຸບາຍຄືອາຈານ ອະທິບາຍວ່າ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຜູ້ເປັນອັນເຕວາສິກຂອງພຣະອາຈານຊື່ນີ້ຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງຜູ້ເປັນອັນເຕວາສິກຂອງພຣະອາຈານຊື່ນີ້ ຈຶ່ງໂຈດວ່າ ຂ້າພະເຈົ້າເຫັນພິກຂຸຜູ້ເປັນອັນເຕວາສິກຂອງພຣະອາຈານຊື່ນີ້ຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ຯລຯ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

[໔໐໔] ຊື່ວ່າ ອຸບາຍຄືເສນາສະນະ ອະທິບາຍວ່າ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຢູ່ໃນເສນາສະນະຊື່ນີ້ ຕ້ອງອາບັດປາຣາຊິກ ເມື່ອເຫັນພິກຂຸອີກອົງໜຶ່ງຢູ່ໃນເສນາສະນະຊື່ນີ້ຈຶ່ງໂຈດວ່າ "ຂ້າ

ພະເຈົ້າເຫັນພິກຂຸຜູ້ຢູ່ໃນເສນາສະນະຊື່ນີ້ຕ້ອງອາບັດປາຣາຊິກແລ້ວ ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາຫຼືສັງຄະກຳບໍ່ໄດ້" ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ສິກຂາບົດວິພັງ

[໔໐໕] ຄຳວ່າ ດ້ວຍອາບັດປາຣາຊິກ ຄື ດ້ວຍອາບັດປາຣາຊິກ ໔ ຂໍ້ໃດຂໍ້ໜຶ່ງ

ຄຳວ່າ ໃສ່ຄວາມ ໄດ້ແກ່ ໂຈດເອງ ຫຼື ສັ່ງໃຫ້ຜູ້ອື່ນໂຈດ

ຄຳວ່າ ເຮັດແນວໃດຈຶ່ງຈະໃຫ້ພິກຂຸນັ້ນພົ້ນຈາກພົມມະຈັນນີ້ໄດ້ ຄວາມວ່າ ໃຫ້ພົ້ນຈາກຄວາມເປັນພິກຂຸ ໃຫ້ພົ້ນຈາກສະມະນະທຳ ໃຫ້ພົ້ນຈາກສີນຂັນ ໃຫ້ພົ້ນຈາກຄຸນ ຄື ຕະບະ

ຄຳວ່າ ເມື່ອສະໄໝຕໍ່ຈາກນັ້ນ ຄວາມວ່າ ລ່ວງຂະນະ ໄລຍະ ບຶດໜຶ່ງທີ່ພິກຂຸຖືກໃສ່ຄວາມຜ່ານໄປແລ້ວ

ຄຳວ່າ ອັນຜູ້ໃດຜູ້ໜຶ່ງໂຈດກໍຕາມ ຄື ຈະມີຜູ້ເຊື່ອຖືຕາມເລື່ອງທີ່ເຮັດໃຫ້ພິກຂຸນັ້ນຖືກໃສ່ຄວາມກໍຕາມ

ຄຳວ່າ ບໍ່ໂຈດກໍຕາມ ຄື ບໍ່ມີຜູ້ໃດ ກ່າວເຖິງພິກຂຸນັ້ນ

ຊື່ວ່າ ອະທິກອນ ໄດ້ແກ່ ອະທິກອນ ໔ ຢ່າງຄື ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ແລະກິດຈາທິກອນ

ຄຳວ່າ ອ້າງເອົາບາງສ່ວນ ໗ລ໗ ເປັນອຸບາຍ ຄື ຖືເອົາອຸບາຍ ໑໐ ຢ່າງນັ້ນ ຢ່າງໃດຢ່າງໜຶ່ງ

ຄຳວ່າ ແລະພິກຂຸຍອມຮັບຜິດ ຄວາມວ່າ ພິກຂຸນັ້ນຍອມຮັບວ່າ "ຂ້າພະເຈົ້າເວົ້າຄຳຂາດປະໂຫຍດ ເວົ້າຕົວະ ເວົ້າບໍ່ຈິງ ບໍ່ຮູ້ຈຶ່ງເວົ້າ"

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ໗ລ໗ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ "ເປັນສັງຄາທິເສດ"

## ບົດພາຊະນີ

## ເອເກາກະມູລະຈັກ

## ໂຈດພິກຂຸຜູ້ຕ້ອງອາບັດສັງຄາທິເສດ

[໔໐໖] ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດສັງຄາທິເສດ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ຖ້າທ່ານໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່

ໄດ້" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນຂໍ້ອື່ນ ແລະທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດສັງຄາທິເສດ ແຕ່ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດຖຸນລັດໄຈ ຖ້າທ່ານໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ຯລຯ" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະ ທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດສັງຄາທິເສດ ແຕ່ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດປາຈິດຕີ ຖ້າທ່ານໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ" ຯລຯ ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະ ທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດສັງຄາທິເສດ ແຕ່ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດປະຕິເທສະນີຍະ ຯລຯ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດທຸກກົດ ຯລຯ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດທຸບພາສິດ ຖ້າທ່ານໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ຯລຯ" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນແລະທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ໂຈດພິກຂຸຜູ້ຕ້ອງອາບັດຖຸນລັດໄຈ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດຖຸນລັດໄຈ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດຖຸນລັດໄຈ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດປາຈິດຕີ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດປະຕິເທສະນີຍະ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດທຸກກົດ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດທຸບພາສິດ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດສັງຄາທິເສດ ຖ້າໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກ ວ່າ "ທ່ານບໍ່ເປັນສະມະນະ ຯລຯ" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ໂຈດພິກຂຸຜູ້ຕ້ອງປາຈິດຕີ ຯລຯ ປະຕິເທສະນີຍະ ຯລຯ ທຸກກົດ ຯລຯ ທຸບພາສິດ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຈິດຕີ ຯລຯ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປະຕິເທສະນີຍະ ຯລຯ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດທຸກກົດ ຯລຯ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດທຸບພາສິດ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດທຸບພາສິດ ຯລຯ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດສັງຄາທິເສດ ຯລຯ ມີຄວາມເຫັນອາບັດທຸບພາສິດ

ວ່າເປັນອາບັດຖຸນລັດໄຈ ຯລຯ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດປາຈິດຕີ ຯລຯ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດປະຕິເທສະນີຍະ ຯລຯ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດທຸກກົດ ຖ້າໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະ ທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ເພິ່ງລວມອາບັດແຕ່ລະຢ່າງ ໆ ໃຫ້ເປັນມູນແລ້ວຜູກເປັນຈັກ

## ສັ່ງໃຫ້ໂຈດພິກຂຸຜູ້ຕ້ອງອາບັດສັງຄາທິເສດ

[໔໐໗] ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດສັງຄາທິເສດ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ຖ້າສັ່ງໃຫ້ໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ຯລຯ" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະ ທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດສັງຄາທິເສດ ແຕ່ມີຄວາມເຫັນອາບັດ ສັງຄາທິເສດວ່າເປັນອາບັດຖຸນລັດໄຈ ຯລຯ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດປາຈິດຕີ ຯລຯ ມີຄວາມເຫັນອາບັດສັງຄາທິເສດວ່າ ເປັນອາບັດປະຕິເທສະນີຍະ ຯລຯ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດທຸກກົດ ຯລຯ ມີຄວາມເຫັນອາບັດສັງຄາທິເສດວ່າເປັນອາບັດທຸບພາສິດ ຖ້າສັ່ງໃຫ້ໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ຯລຯ" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະ ທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ສັ່ງໃຫ້ໂຈດພິກຂຸຜູ້ຕ້ອງອາບັດຖຸນລັດໄຈ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດຖຸນລັດໄຈ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດຖຸນລັດໄຈ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດປາຈິດຕີ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດປະຕິເທສະນີຍະ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດທຸກກົດ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດທຸບພາສິດ ຯລຯ ມີຄວາມເຫັນອາບັດຖຸນລັດໄຈວ່າເປັນອາບັດສັງຄາທິເສດ ຖ້າສັ່ງໃຫ້ໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ຯລຯ" ແມ່ນແນວນີ້ ອະທິກອນຍ່ອມເປັນອາບັດຂໍ້ອື່ນ ແລະທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

ສັ່ງໃຫ້ໂຈດພິກຂຸຜູ້ຕ້ອງອາບັດປາຈິດຕີ ຫລຫ ປະຕິເທສະນີຍະ ຫລຫ ທຸກກົດ ຫລຫ ທຸບພາສິດ

ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປາຈິດຕີ ຫລຫ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດປະຕິເທສະນີຍະ ຫລຫ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດທຸກກົດ ຫລຫ ພິກຂຸຜູ້ໂຈດໄດ້ເຫັນພິກຂຸຕ້ອງອາບັດທຸບພາສິດ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດທຸບພາສິດ ຫລຫ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດສັງຄາທິເສດ ຫລຫ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດຖຸນລັດໄຈ ຫລຫ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດປາຈິດຕີ ຫລຫ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດປະຕິເທສະນີຍະ ຫລຫ ມີຄວາມເຫັນອາບັດທຸບພາສິດວ່າເປັນອາບັດທຸກກົດ ຖ້າສັ່ງໃຫ້ໂຈດພິກຂຸນັ້ນດ້ວຍອາບັດປາຣາຊິກວ່າ "ທ່ານບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍສາກະຍະບຸດ ທ່ານຮ່ວມອຸໂປສົດ ປະວາຣະນາ ຫຼື ສັງຄະກຳບໍ່ໄດ້" ແມ່ນແນວນີ້ ອະທິກອນນັ້ນຍ່ອມເປັນອາບັດຂໍ້ອື່ນ ແລະ ທ່ານອ້າງເອົາເປັນອຸບາຍ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳເວົ້າ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໐໗] ໑. ພິກຂຸຜູ້ສຳຄັນວ່າເປັນແນວນັ້ນ ໂຈດເອງ ຫຼື ສັ່ງໃຫ້ຜູ້ອື່ນໂຈດ

໒. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ທຸຕິຍະທຸດຖະໂທສະສິກຂາບົດທີ ៧ ຈົບ**

# ໑໐. ສັງຄະເພທະສິກຂາບົດ

## ວ່າດ້ວຍການເຮັດສົງໃຫ້ແຕກກັນ

### ເລື້ອງພຣະເທວະທັດ

[໔໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄື ຄັ້ງນັ້ນ ພຣະເທວະທັດເຂົ້າໄປຫາພຣະໂກກາລິກະ ພຣະກະຕະໂມຣະກະ ຕິດສະກະ ພຣະຂັນທະເທວີບຸດ ແລະພຣະສະມຸດທະທັດເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ກ່າວກັບທ່ານເຫຼົ່ານັ້ນດັ່ງນີ້ວ່າ "ມາເທີ້ນ ທ່ານທັງຫຼາຍ ພວກເຮົາຈະທຳລາຍສົງທຳລາຍຈັກຂອງພຣະສະມະນະໂຄດົມ"

ເມື່ອພຣະເທວະທັດກ່າວແນວນີ້ ພຣະໂກກາລິກະກໍໄດ້ກ່າວກັບພຣະເທວະທັດດັ່ງນີ້ວ່າ "ພຣະສະມະນະໂຄດົມ ມີລິດທານຸພາບຫຼາຍ ເຮັດແນວໃດ ພວກເຮົາຈຶ່ງຈະທຳລາຍສົງ ທຳລາຍຈັກຂອງພຣະສະມະນະໂຄດົມໄດ້ນໍ"

### ວັດຖຸ ໕ ປະການ

ພຣະເທວະທັດກ່າວວ່າ "ມາເທີ້ນທ່ານທັງຫຼາຍ ພວກເຮົາຈະເຂົ້າໄປເຝົ້າພຣະສະມະນະໂຄດົມແລ້ວທູນຂໍວັດຖຸ ໕ ປະການ ວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກ  ໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໄສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ວັດຖຸ ໕ ປະການເຫຼົ່ານີ້ກໍເປັນໄປເພື່ອຄວາມມັກໜ້ອຍຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ຂ້າພຣະອົງຂໍປະທານວະໂຣກາດ ດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນມີໂທດ
໒. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາ ແລະ ຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ"

ພຣະສະມະນະໂຄດົມຈະບໍ່ຊົງອະນຸຍາດວັດຖຸ ໕ ປະການນີ້ແນ່ ພວກເຮົາຈັກໃຊ້ວັດຖຸ ໕ ປະການນີ້ຊັກຊວນໃຫ້ປະຊາຊົນເຊື່ອຖື" ທ່ານເຫຼົ່ານັ້ນປຶກສາກັນວ່າ "ພວກເຮົາສາມາດທີ່ຈະໃຊ້ວັດຖຸ ໕ ປະການເຫຼົ່ານັ້ນທຳລາຍສົງ ທຳລາຍຈັກຂອງພຣະສະມະນະໂຄດົມໄດ້ ຍ້ອນຍັງມີພວກມະນຸດທີ່ເຫຼື້ອມໃສໃນການປະຕິບັດປອນ ໆ"

ຄັ້ງນັ້ນ ພຣະເທວະທັດພ້ອມດ້ວຍບໍລິສັດໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວຈຶ່ງຖວາຍບັງຄົມແລ້ວນັ່ງລົງໃນທີ່ສົມຄວນ ຂາບທູນວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ວັດຖຸ ໕ ປະການເຫຼົ່ານີ້ກໍເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ຂ້າພຣະອົງຂໍປະທານອະໂຣກາດ ດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນມີໂທດ
໒. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາແລະຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍເທວະທັດ ພິກຂຸອົງໃດປາຖະໜາກໍຈົ່ງຢູ່ປ່າເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຢູ່ໃນບໍລິເວນບ້ານເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງທ່ຽວບິນທະບາດເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຍິນດີກິດນິມົນເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຖືຜ້າບັງສຸກຸນເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຍິນດີຜ້າຄະຫະບໍດີເທີ້ນ ເຮົາອະນຸຍາດຖື ເສນາສະນະຕາມເຫງົ້າໄມ້ ໘ ເດືອນເທົ່ານັ້ນ ເຮົາອະນຸຍາດປາແລະຊີ້ນທີ່ບໍລິສຸດດ້ວຍອາການ ໓ ຢ່າງ ຄື (໑) ບໍ່ໄດ້ເຫັນ (໒) ບໍ່ໄດ້ຍິນ (໓) ບໍ່ໄດ້ຄິດສົງໄສ"

ຄັ້ງນັ້ນ ພຣະເທວະທັດລ່າເລີງດີໃຈວ່າ ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດວັດຖຸ ໕ ປະການເຫຼົ່ານີ້ ພ້ອມກັບບໍລິສັດ ລຸກຂຶ້ນຈາກອາສະນະ ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຈາກໄປ

[໔໑໐] ສະໄໝນັ້ນ ພຣະເທວະທັດພ້ອມກັບບໍລິສັດເຂົ້າໄປໃນເມືອງຣາຊະຄຶ ໃຊ້ວັດຖຸ ໕ ປະການຊັກຊວນໃຫ້ປະຊາຊົນເຊື່ອຖືດ້ວຍກ່າວວ່າ "ພວກເຮົາເຂົ້າໄປເຝົ້າພຣະສະມະນະໂຄດົມ ທູນຂໍວັດຖຸ ໕ ປະການວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ວັດຖຸ ໕ ປະການເຫຼົ່ານີ້ກໍເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ຂ້າພຣະອົງຂໍປະທານອະໂອກາດ ດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນມີໂທດ
໒. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາ ແລະ ຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ"

ແຕ່ພຣະສະມະນະໂຄດົມບໍ່ຊົງອະນຸຍາດວັດຖຸ ໕ ປະການເຫຼົ່ານັ້ນ ພວກເຮົາຈຶ່ງສະມາທານປະພຶດຕາມວັດຖຸ ໕ ປະການເຫຼົ່ານີ້ກັນເທີ້ນ"

ບັນດາປະຊາຊົນເຫຼົ່ານັ້ນ ພວກທີ່ບໍ່ສັດທາ ບໍ່ເຫຼື້ອມໃສ ມີຄວາມຮູ້ບໍ່ດີ ກ່າວວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ປະພຶດກຳຈັດກິເລດ ປະພຶດເຄັ່ງຄັດ ສ່ວນພຣະສະມະນະໂຄດົມມັກຫຼາຍ ດຳຣິເພື່ອຄວາມມັກຫຼາຍ"

ສ່ວນພວກມີສັດທາ ເຫຼື້ອມໄສ ເປັນບັນດິດ ສະຫຼຽວສະຫຼາດ ມີຄວາມຮູ້ດີ ກໍຕຳໜິປະນາມ ໂພນທະນາວ່າ "ເປັນຫຍັງພຣະເທວະທັດຈຶ່ງພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກຂອງພຣະຜູ້ມີພຣະພາກເຈົ້າແນວນັ້ນນໍ"

ພິກຂຸທັງຫຼາຍໄດ້ຍິນປະຊາຊົນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະເທວະທັດຈຶ່ງພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກແນວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິພຣະເທວະທັດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະເທວະທັດວ່າ "ເທວະທັດ ໄດ້ຂ່າວວ່າທ່ານພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກ ແມ່ນບໍ?" ພຣະເທວະທັດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານນັ້ນບໍ່ສົມຄວນ ຯລຯ ໂມຄະບຸຣຸດເປັນຫຍັງທ່ານຈຶ່ງພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກແນວນັ້ນນໍ ໂມຄະບຸຣຸດການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກ ສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໑໑] **ກໍ ພິກຂຸໃດພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ຫຼື ຖືຍ້ອງຍໍຢືນຢັນອະທິກອນອັນເປັນເຫດເຮັດໃຫ້ແຕກແຍກກັນ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ທ່ານຢ່າພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ຫຼື ຖືຍ້ອງຍໍຢືນຢັນອະທິກອນອັນເປັນເຫດເຮັດໃຫ້ແຕກແຍກກັນ ທ່ານຈົ່ງພ້ອມພຽງກັບສົງ ຍ້ອນສົງຜູ້ພ້ອມພຽງ ປອງດອງ ບໍ່ຜິດຖຽງມີອຸດເທດດຽວກັນ ຍ່ອມຢູ່ຜາສຸກ" ແລະພິກຂຸນັ້ນ ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນແນວນີ້ຍັງຍ້ອງຍໍຢູ່ແນວນັ້ນ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງສູດສະມະນຸພາດກວ່າຈະຄົບ ៣ ຄັ້ງເພື່ອໃຫ້ສະລະເລື້ອງນັ້ນ ຖ້າທ່ານກຳລັງຖືກສູດສະມະນຸພາດກວ່າຈະຄົບ ៣ ຄັ້ງ ສະລະເລື້ອງນັ້ນໄດ້ນັ້ນເປັນການດີ ຖ້າທ່ານບໍ່ສະລະ ເປັນສັງຄາທິເສດ**

### ເລື້ອງພຣະເທວະທັດ ຈົບ

## ສິກຂາບົດວິພັງ

[໔໑໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຊື່ວ່າ ຜູ້ພ້ອມພຽງ ຄື ສົງຜູ້ມີສັງວາດສະເໝີກັນ ຢູ່ໃນສີມາດຽວກັນ

ຄຳວ່າ ພຽນພະຍາຍາມເພື່ອທຳລາຍ ຄື ສະແຫວງຫາພວກ ລວມກັນເປັນໝູ່ ໂດຍມຸ້ງໝາຍວ່າ ເຮັດແນວໃດ ພິກຂຸເຫຼົ່ານີ້ຈະແຕກກັນແຍກກັນ ແບ່ງເປັນພວກອື່ນ

ຄຳວ່າ ຫຼື ຯລຯ ອະທິກອນອັນເປັນເຫດເຮັດໃຫ້ແຕກແຍກກັນ ໄດ້ແກ່ ເລື້ອງເຮັດໃຫ້ແຕກ ກັນ ໑໘ ຢ່າງ

ຄຳວ່າ ຖື ຄື ຢຶດເອົາ

ຄຳວ່າ ຍ້ອງຍໍ ຄື ສະແດງ

ຄຳວ່າ ຢືນຢັນ ຄື ບໍ່ກັບຄຳ

ຄຳວ່າ ພິກຂຸນັ້ນ ໄດ້ແກ່ ພິກຂຸຜູ້ທຳລາຍສົງ

ຄຳວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ອະທິບາຍວ່າ ພິກຂຸຜູ້ໄດ້ເຫັນ ຜູ້ໄດ້ຍິນເພິ່ງວ່າກ່າວຕັກເຕືອນພິກຂຸຜູ້ພຽນພະຍາຍາມເພື່ອທຳລາຍສົງນັ້ນວ່າ "ທ່ານຢ່າພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ຫຼື ຢ່າຖືຍ້ອງຍໍຢືນຢັນອະທິກອນອັນເປັນເຫດເຮັດໃຫ້ແຕກແຍກກັນ ທ່ານຈົ່ງພ້ອມພຽງກັບສົງ ຍ້ອນສົງຜູ້ພ້ອມພຽງ ປອງດອງ ບໍ່ຜິດຖຽງ ມີອຸດເທດດຽວກັນ ຍ່ອມຢູ່ ຜາສຸກ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ៤ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ៣ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍຮູ້ແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງຄຸມຕົວມາສູ່ທ່າມກາງສົງ ວ່າກ່າວຕັກເຕືອນວ່າ "ທ່ານຢ່າພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ຫຼື ຢ່າຖືຍ້ອງຍໍຢືນຢັນອະທິກອນອັນເປັນເຫດເຮັດໃຫ້ແຕກແຍກກັນ ທ່ານຈົ່ງພ້ອມພຽງກັບສົງ ຍ້ອນສົງຜູ້ພ້ອມພຽງ ປອງດອງ ບໍ່ຜິດຖຽງ ມີອຸດເທດດຽວກັນ ຍ່ອມຢູ່ ຜາສຸກ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ៤ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ៣ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ຕ້ອງອາບັດທຸກກົດ ສົງເພິ່ງສູດສະມະນຸພາດທ່ານ

## ວິທີສູດສະມະນຸພາດ ແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍເພິ່ງສູດສະມະນຸພາດພິກຂຸນັ້ນແນວນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

[៤១៣] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ພິກຂຸນັ້ນບໍ່ຍອມສະລະເລື່ອງນັ້ນ ຖ້າສົງພ້ອມແລ້ວກໍເພິ່ງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື່ອງນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ພິກຂຸນັ້ນບໍ່ສະລະເລື່ອງນັ້ນ ສົງສູດສະມະນຸພາດທ່ານເພື່ອໃຫ້ສະລະເລື່ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ ເພື່ອໃຫ້ສະລະເລື່ອງນັ້ນສາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ ແມ່ນຄັ້ງທີ ៤ ໗ລ໗ ແມ່ນຄັ້ງທີ ៣ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງ ພິກຂຸນັ້ນບໍ່ສະລະເລື່ອງນັ້ນ ສົງສູດສະມະນຸພາດທ່ານເພື່ອໃຫ້ສະລະ

ເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນສາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ ສົງສູດສະມະນຸພາດເພື່ອໃຫ້ສະລະເລື້ອງນັ້ນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງເປັນມະຕິແນວນີ້

[໔໑໔] ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ໗ລ໗ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ “ເປັນສັງຄາທິເສດ”

## ບົດພາຊະນີ

[໔໑໕] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໑໖] ໑. ພິກຂຸຜູ້ຍັງບໍ່ຖືກສູດສະມະນຸພາດ
໒. ພິກຂຸຜູ້ຍອມສະລະ
໓. ພິກຂຸວິກົນຈະລິດ
໔. ພິກຂຸຜູ້ມີຈິດຟຸ້ງຊ່ານ
໕. ພິກຂຸຜູ້ກະສັບກະສ່າຍຍ້ອນເວທະນາ
໖. ພິກຂຸຕົ້ນບັນຍັດ

**ສັງຄະເພທະສິກຂາບົດທີ 10 ຈົບ**

# ໑໑. ສັງຄະເພທະນຸວັດຕະກະສິກຂາບົດ

## ວ່າດ້ວຍພິກຂຸຜູ້ປະພຶດຕາມ ກ່າວສະນັບສະໜຸນພິກຂຸຜູ້ທຳລາຍສົງ

### ເລື້ອງພຣະໂກກາລິກະແລະພວກປະພຶດຕາມ ກ່າວສະນັບສະໜຸນພຣະເທວະທັດ

[໔໑໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບ ຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພຣະເທວະທັດພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກ

ພິກຂຸທັງຫຼາຍກ່າວກັນແນວນີ້ວ່າ “ພຣະເທວະທັດກ່າວສິ່ງທີ່ບໍ່ເປັນທຳ ກ່າວສິ່ງທີ່ບໍ່ເປັນວິໄນ ເປັນຫຍັງ ພຣະເທວະທັດຈຶ່ງພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກແນວນັ້ນນໍ”

ເມື່ອພິກຂຸທັງຫຼາຍກ່າວແນວນີ້ ພຣະໂກກາລິກະ ພຣະກະຕະໂມຣະກະຕິດສະກະ ພຣະຂັນທະເທວີບຸດ ແລະພຣະສະມຸດທະທັດ ໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ “ທ່ານທັງຫຼາຍ ພວກທ່ານຢ່າກ່າວແນວນັ້ນ ພຣະເທວະທັດກ່າວສິ່ງທີ່ເປັນທຳ ກ່າວສິ່ງທີ່ເປັນວິໄນ ທ່ານກ່າວຕາມຄວາມພໍໃຈແລະຄວາມພໍໃຈຂອງພວກເຮົາ ທ່ານຮູ້ຄວາມພໍໃຈ ແລະ ຄວາມພໍໃຈຂອງພວກເຮົາຈຶ່ງກ່າວ ພວກເຮົາເຫັນດ້ວຍກັບຄຳຂອງທ່ານ”

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພິກຂຸທັງຫຼາຍຈຶ່ງປະພຶດຕາມ ກ່າວສະນັບສະໜຸນພຣະເທວະທັດຜູ້ພຽນພະຍາຍາມເພື່ອທຳລາຍສົງແນວນັ້ນນໍ” ເມື່ອພິກຂຸເຫຼົ່ານັ້ນຕຳໜິພິກຂຸພວກພຣະໂກກາລິກະເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ມີພິກຂຸປະພຶດຕາມ ກ່າວສະນັບສະໜຸນເທວະທັດຜູ້ພຽນພະຍາຍາມເພື່ອທຳລາຍສົງ ແມ່ນບໍ?” ພິກຂຸທັງຫຼາຍຂາບທູນວ່າ “ແມ່ນຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ຯລຯ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

**[໔໑໗] ກໍ ພິກຂຸມີຈຳນວນ ໑ ອົງ ໒ ອົງ ຫຼື ໓ ອົງປະພຶດຕາມ ກ່າວສະນັບສະໜຸນພິກຂຸນັ້ນ ພວກທ່ານກ່າວແນວນີ້ວ່າ "ພວກທ່ານຢ່າວ່າກ່າວອັນໃດແກພິກຂຸນັ້ນ ພິກຂຸນັ້ນກ່າວສິ່ງທີ່ເປັນທຳ ພິກຂຸນັ້ນກ່າວສິ່ງທີ່ເປັນວິໄນ ພິກຂຸນັ້ນກ່າວຕາມຄວາມພໍໃຈ ແລະ ຄວາມເຫັນດີຂອງພວກເຮົາ ທ່ານຮູ້ຄວາມພໍໃຈ ແລະຄວາມເຫັນດີຂອງພວກເຮົາຈຶ່ງກ່າວ ພວກເຮົາເຫັນດ້ວຍກັບຄຳນັ້ນ" ພິກຂຸເຫຼົ່ານັ້ນອັນພິກຂຸທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ພວກທ່ານຢ່າເວົ້າແນວນັ້ນ ພິກຂຸນັ້ນບໍ່ແມ່ນຜູ້ກ່າວສິ່ງທີ່ເປັນທຳ ພິກຂຸນັ້ນບໍ່ແມ່ນຜູ້ກ່າວສິ່ງທີ່ເປັນວິໄນ ພວກທ່ານຢ່າພໍໃຈການທຳລາຍສົງ ພວກທ່ານຈົ່ງພ້ອມພຽງກັບສົງ ຍ້ອນສົງຜູ້ພ້ອມພຽງ ປອງດອງ ບໍ່ຜິດຖຽງ ມີອຸດເທດດຽວກັນ ຍ່ອມຢູ່ຜາສຸກ" ພິກຂຸເຫຼົ່ານັ້ນອັນພວກພິກຂຸວ່າກ່າວ ຕັກເຕືອນຢູ່ແນວນີ້ ຍັງຍ້ອງຍໍຢູ່ແນວນັ້ນ ພິກຂຸເຫຼົ່ານັ້ນອັນພິກຂຸທັງຫຼາຍເພິ່ງສູດສະມະນຸພາດຈົນກວ່າຈະຄົບ ໓ ຄັ້ງ ເພື່ອໃຫ້ສະລະເລື້ອງນັ້ນ ຖ້າພວກທ່ານກຳລັງຖືກສູດສະມະນຸພາດຈົນກວ່າຈະຄົບ ໓ ຄັ້ງ ສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າພວກທ່ານບໍ່ສະລະ ເປັນສັງຄາທິເສດ**

**ເລື້ອງພຣະໂກກາລິກະແລະພວກປະພຶດຕາມ ກ່າວສະນັບສະໜຸນພຣະເທວະທັດ ຈົບ**

## ສິກຂາບົດວິພັງ

[໔໑໘] ຄຳວ່າ ກໍ ໆລໆ ພິກຂຸນັ້ນ ຄື ພິກຂຸຜູ້ທຳລາຍສົງນັ້ນ

ຄຳວ່າ ພິກຂຸ ຄື ມີພິກຂຸເຫຼົ່າອື່ນ

ຄຳວ່າ ປະພຶດຕາມ ຄວາມວ່າ ພິກຂຸຜູ້ທຳລາຍສົງເຫັນຢ່າງໃດ ພໍໃຈຢ່າງໃດ ແລະຍິນດີຢ່າງໃດ ແມ່ນພິກຂຸເຫຼົ່ານັ້ນກໍເຫັນແນວນັ້ນ ພໍໃຈແນວນັ້ນ ແລະ ຍິນດີແນວນັ້ນ

ຄຳວ່າ ກ່າວສະນັບສະໜຸນ ຄື ດຳລົງຢູ່ໃນພວກ ໃນຝ່າຍຂອງພິກຂຸຜູ້ທຳລາຍສົງນັ້ນ

ຄຳວ່າ ໑ ອົງ ໒ ອົງ ຫຼື ໓ ອົງ ຄວາມວ່າ ມີພິກຂຸ ໑ ອົງ ໒ ອົງ ຫຼື ໓ ອົງ ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ພວກທ່ານຢ່າວ່າກ່າວອັນໃດແກ່ພິກຂຸນັ້ນ ພິກຂຸນັ້ນກ່າວ ສິ່ງທີ່ເປັນທຳ ພິກຂຸນັ້ນກ່າວສິ່ງທີ່ເປັນວິໄນ ພິກຂຸນັ້ນກ່າວຕາມຄວາມພໍໃຈ ແລະ ເຫັນດີຂອງພວກເຮົາ ທ່ານຮູ້ຄວາມພໍໃຈແລະຄວາມເຫັນດີຂອງພວກເຮົາຈຶ່ງກ່າວ ພວກເຮົາເຫັນດ້ວຍກັບຄຳນັ້ນ"

ຄຳວ່າ ພິກຂຸເຫຼົ່ານັ້ນ ໄດ້ແກ່ ພິກຂຸຜູ້ປະພຶດຕາມເຫຼົ່ານັ້ນ

ຄຳວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ອະທິບາຍວ່າ ພິກຂຸຜູ້ໄດ້ເຫັນ ຜູ້ໄດ້ຍິນເພິ່ງວ່າກ່າວຕັກເຕືອນພິກຂຸຜູ້ປະພຶດຕາມເຫຼົ່ານັ້ນວ່າ "ພວກທ່ານຢ່າກ່າວແນວນັ້ນ ພິກຂຸນັ້ນບໍ່ແມ່ນຜູ້ກ່າວສິ່ງທີ່ເປັນທຳ ພິກຂຸນັ້ນບໍ່ແມ່ນຜູ້ກ່າວສິ່ງທີ່ເປັນວິໄນ ພວກທ່ານຢ່າພໍໃຈການທຳລາຍສົງ ພວກທ່ານຈົ່ງພ້ອມພຽງກັບສົງ ຍ້ອນສົງຜູ້ພ້ອມພຽງ ປອງດອງ ບໍ່ຜິດຖຽງ ມີອຸດເທດດຽວກັນ ຍ່ອມຢູ່ຜາສຸກ" ເພິ່ງວ່າກ່າວຕັກເຕືອນພວກ

ທ່ານແມ່ນຄັ້ງທີ ໔ ເພິ່ງວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໓ ຖ້າພິກຂຸເຫຼົ່ານັ້ນສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍຮູ້ແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸເຫຼົ່ານັ້ນອັນພິກຂຸທັງຫຼາຍເພິ່ງຄຸມຕົວມາສູ່ທ່າມກາງສົງ ວ່າກ່າວຕັກເຕືອນວ່າ "ພວກທ່ານຢ່າກ່າວແນວນັ້ນ ພິກຂຸນັ້ນບໍ່ແມ່ນຜູ້ກ່າວສິ່ງທີ່ເປັນທຳ ພິກຂຸນັ້ນບໍ່ແມ່ນຜູ້ກ່າວສິ່ງທີ່ເປັນວິໄນ ພວກທ່ານຢ່າພໍໃຈການທຳລາຍສົງ ພວກທ່ານຈົ່ງພ້ອມພຽງກັບສົງ ຍ້ອນສົງຜູ້ພ້ອມພຽງ ປອງດອງ ບໍ່ຜິດຖຽງກັນ ມີອຸດເທດດຽວກັນ ຍ່ອມຢູ່ຜາສຸກ" ເພິ່ງວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໔ ເພິ່ງວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໓ ຖ້າພິກຂຸເຫຼົ່ານັ້ນສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ສົງເພິ່ງສູດສະມະນຸພາດພິກຂຸເຫຼົ່ານັ້ນ

## ວິທີສູດສະມະນຸພາດ ແລະກຳມະວາຈາສູດສະມະນຸພາດ

ພິກຂຸເຫຼົ່ານັ້ນອັນພິກຂຸທັງຫຼາຍເພິ່ງສູດສະມະນຸພາດແນວນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

[໔໔໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ ປະພຶດຕາມກ່າວສະໜັບສະໜຸນພິກຂຸຊື່ນີ້ ຜູ້ພຽນພະຍາຍາມເພື່ອທຳລາຍສົງ ພິກຂຸເຫຼົ່ານັ້ນຍັງບໍ່ສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວ ເພິ່ງສູດສະມະນຸພາດ ພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ ປະພຶດຕາມ ກ່າວສະໜັບສະໜຸນພິກຂຸຊື່ນີ້ ຜູ້ພຽນພະຍາຍາມເພື່ອທຳລາຍສົງ ພິກຂຸເຫຼົ່ານັ້ນຍັງບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນຄັ້ງທີ ໔ ຯລຯ ແມ່ນຄັ້ງທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ ປະພຶດຕາມ ກ່າວສະໜັບສະໜຸນພິກຂຸຊື່ນີ້ຜູ້ພຽນພະຍາຍາມເພື່ອທຳລາຍສົງ ພິກຂຸເຫຼົ່ານັ້ນຍັງບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸທັງຫຼາຍຊື່ນີ້ແລະຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດແກພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸທັງຫຼາຍຊື່ນີ້ ແລະ ຊື່ນີ້ ສົງສູດສະມະນຸພາດເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໔໘໑] ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອພວກທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ສົງເພິ່ງສູດສະມະນຸພາດພິກຂຸ ໒ - ໓ ອົງເທື່ອດຽວກັນ ບໍ່ເພິ່ງສູດສະມະນຸພາດ ພິກຂຸຫຼາຍກວ່ານັ້ນເທື່ອດຽວກັນ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ໗ລ໗ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ “ເປັນສັງຄາທິເສດ”

## ບົດພາຊະນີ

[໔໘໒] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໘໓] ໑. ພິກຂຸຍັງບໍ່ຖືກສູດສະມະນຸພາດ

໒. ພິກຂຸຜູ້ຍອມສະລະ

໓. ພິກຂຸວິກົນຈະລິດ

໔. ພິກຂຸມີຈິດຟຸ້ງຊ່ານ

໕. ພິກຂຸກະສັບກະສ່າຍຍ້ອນເວທະນາ

໖. ພິກຂຸຕົ້ນບັນຍັດ

**ສັງຄະເພທະນຸວັດຕະກະສິກຂາບົດທີ ໑໑ ຈົບ**

# ໑໘. ທຸບພະຈະສິກຂາບົດ

## ວ່າດ້ວຍພິກຂຸເປັນຄົນວ່າຍາກ

### ເລື້ອງພຣະສັນນະ

[໔໘໔] ສະໄໝນັ້ນພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ທ່ານພຣະສັນນະ ປະພຶດບໍ່ສົມຄວນ ພິກຂຸທັງຫຼາຍວ່າກ່າວຕັກເຕືອນແນວນີ້ວ່າ "ທ່ານສັນນະ ທ່ານຢ່າໄດ້ກະທຳແນວນີ້ ການກະທຳແນວນັ້ນບໍ່ສົມຄວນ"

ທ່ານພຣະສັນນະກ່າວແນວນີ້ວ່າ "ພວກທ່ານສຳຄັນວ່າເຮົາເປັນຜູ້ທີ່ພວກທ່ານຄວນວ່າກ່າວຕັກເຕືອນບໍ? ເຮົາຕ່າງຫາກສົມຄວນວ່າກ່າວຕັກເຕືອນພວກທ່ານ ພຣະພຸດທະເຈົ້າເປັນຂອງເຮົາ ພຣະທຳເປັນຂອງເຮົາ ພຣະທຳອັນພຣະລູກເຈົ້າຂອງເຮົາເປັນຜູ້ຕັດສະຮູ້ແລ້ວ ພວກທ່ານຕ່າງຊື່ ຕ່າງໂຄດ ຕ່າງຊາດ ຕ່າງຕະກູນ ມາບວດລວມກັນເໝືອນລົມພະຍຸພັດຫຍ້າ ໄມ້ ແລະໃບໄມ້ແຫ້ງມາລວມກັນ ຫຼືເໝືອນແມ່ນ້ຳໄຫຼຈາກພູເຂົາພັດຈອກແໜ ມາລວມກັນໄວ້ ພວກທ່ານສຳຄັນວ່າເຮົາເປັນຜູ້ທີ່ພວກທ່ານຄວນວ່າກ່າວຕັກເຕືອນຫຼື ເຮົາຕ່າງຫາກສົມຄວນວ່າກ່າວຕັກເຕືອນພວກທ່ານ ພຣະພຸດທະເຈົ້າເປັນຂອງເຮົາ ພຣະທຳເປັນຂອງເຮົາ ພຣະທຳອັນພຣະລູກເຈົ້າຂອງເຮົາເປັນຜູ້ຕັດສະຮູ້ແລ້ວ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະສັນນະເມື່ອພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳ ຈຶ່ງເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ແນວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະສັນນະວ່າ "ສັນນະ ໄດ້ຂ່າວວ່າ ທ່ານອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳກັບເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ແມ່ນບໍ?" ທ່ານພຣະສັນນະ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແນວນີ້ບໍ່ສົມຄວນ ຯລຯ ບໍ່ຄວນເຮັດ ໂມຄະບຸຣຸດ ເປັນຫຍັງທ່ານອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳຈຶ່ງເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ໂມຄະບຸຣຸດ ການກະທຳ

ແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

**[໔໔໕] ກໍ ພິກຂຸເປັນຄົນວ່າຍາກ ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທໍາ ໃນສິກຂາບົດທີ່ມາໃນອຸດເທດ ກັບເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ໂດຍກ່າວວ່າ "ພວກທ່ານຢ່າວ່າກ່າວອັນໃດແກ່ເຮົາ ບໍ່ວ່າດີຫຼືຊົ່ວ ເຖິງເຮົາກໍຈະບໍ່ວ່າກ່າວອັນໃດແກພວກທ່ານ ບໍ່ວ່າດີຫຼືຊົ່ວຄືກັນ ພວກທ່ານງົດເວັ້ນວ່າກ່າວເຮົາເທີ້ນ" ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ທ່ານຢ່າເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ຈົ່ງເຮັດຕົວໃຫ້ເປັນຄົນທີ່ເຂົາວ່າກ່າວຕັກເຕືອນໄດ້ ແມ່ນທ່ານກໍຈົ່ງວ່າກ່າວຕັກເຕືອນພິກຂຸທັງຫຼາຍໂດຍຊອບທໍາ ແມ່ນພິກຂຸທັງຫຼາຍ ກໍຈະວ່າກ່າວຕັກເຕືອນທ່ານໂດຍຊອບທໍາ ຍ້ອນວ່າບໍລິສັດຂອງພຣະຜູ້ມີພຣະພາກເຈົ້າຈະເລີນ ແລ້ວດ້ວຍອາການແນວນີ້ ຄື ດ້ວຍການວ່າກ່າວຕັກເຕືອນກັນແລະກັນ ດ້ວຍການຊ່ອຍເຫຼືອກັນແລະກັນໃຫ້ອອກຈາກອາບັດ" ພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ແນວນີ້ ກໍຍັງຍ້ອງຍໍ ຢູ່ແນວນັ້ນ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງສູດສະມະນຸພາດຈົນກວ່າຈະຄົບ ໓ ຄັ້ງເພື່ອໃຫ້ສະ ລະເລື້ອງນັ້ນ ຖ້າທ່ານກໍາລັງຖືກສູດສະມະນຸພາດຈົນກວ່າຈະຄົບ ໓ ຄັ້ງ ສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ເປັນສັງຄາທິເສດ**

**ເລື້ອງພຣະສັນນະ ຈົບ**

## ສິກຂາບົດວິພັງ

[໔໔໖] ຄໍາວ່າ ກໍ ຯລຯ ພິກຂຸເປັນຄົນວ່າຍາກ ຄວາມວ່າ ເປັນຜູ້ວ່າຍາກ ປະກອບດ້ວຍທໍາທີ່ເຮັດໃຫ້ເປັນຄົນວ່າຍາກ ບໍ່ອົດທົນຮັບຄໍາສອນໂດຍເຄົາລົບ

ຄໍາວ່າ ໃນສິກຂາບົດທີ່ມາໃນອຸດເທດ ໄດ້ແກ່ ໃນສິກຂາບົດທີ່ມາໃນພຣະປາຕິໂມກ

ຄໍາວ່າ ພິກຂຸທັງຫຼາຍ ໄດ້ແກ່ ພິກຂຸເຫຼົ່າອື່ນ

ຊື່ວ່າ ໂດຍຊອບທໍາ ຄື ສິກຂາບົດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດແລ້ວ ນັ້ນຊື່ວ່າ ໂດຍຊອບທໍາ

ພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ໂດຍສິກຂາບົດຊອບທໍານັ້ນ ກັບເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ໂດຍກ່າວວ່າ "ພວກທ່ານຢ່າວ່າກ່າວອັນໃດເຮົາບໍ່ວ່າດີຫຼືຊົ່ວ ເຖິງເຮົາກໍຈະບໍ່ວ່າກ່າວອັນໃດພວກທ່ານ ບໍ່ວ່າດີຫຼືຊົ່ວ ພວກທ່ານຈົ່ງເວັ້ນວ່າກ່າວເຮົາເທີ້ນ"

ຄໍາວ່າ ພິກຂຸນັ້ນ ໄດ້ແກ່ ພິກຂຸຜູ້ວ່າຍາກນັ້ນ

ຄໍາວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ອະທິບາຍວ່າ ພິກຂຸຜູ້ໄດ້ເຫັນ ຜູ້ໄດ້ຍິນເພິ່ງວ່າກ່າວຕັກເຕືອນພິກຂຸເປັນຄົນວ່າຍາກນັ້ນ ວ່າ "ທ່ານຢ່າເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ຈົ່ງເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນໄດ້ ແມ່ນທ່ານຈົ່ງວ່າກ່າວຕັກເຕືອນພິກຂຸທັງຫຼາຍໂດຍຊອບທຳ ແມ່ນພິກຂຸທັງຫຼາຍກໍຈະວ່າກ່າວຕັກເຕືອນທ່ານໂດຍຊອບທຳ ຍ້ອນວ່າບໍລິສັດຂອງພຣະຜູ້ມີພຣະພາກເຈົ້າຈະເລີນແລ້ວດ້ວຍອາການແນວນີ້ ຄື ດ້ວຍການວ່າກ່າວຕັກເຕືອນກັນແລະກັນ ດ້ວຍການຊ່ອຍເຫຼືອກັນແລະກັນໃຫ້ອອກຈາກອາບັດ" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍໄດ້ຍິນແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງຄຸມຕົວມາສູ່ທ່າມກາງສົງ ວ່າກ່າວຕັກເຕືອນວ່າ "ທ່ານຢ່າເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ຈົ່ງເຮັດຕົວໃຫ້ເປັນຄົນທີ່ເຂົາວ່າກ່າວຕັກເຕືອນໄດ້ ແມ່ນທ່ານຈົ່ງວ່າກ່າວຕັກເຕືອນພິກຂຸທັງຫຼາຍໂດຍຊອບທຳ ແມ່ນພິກຂຸທັງຫຼາຍກໍຈະວ່າກ່າວຕັກເຕືອນທ່ານໂດຍຊອບທຳ ຍ້ອນບໍລິສັດຂອງພຣະຜູ້ມີພຣະພາກເຈົ້າຈະເລີນແລ້ວດ້ວຍອາການແນວນີ້ ຄື ດ້ວຍການວ່າກ່າວຕັກເຕືອນກັນແລະກັນ ດ້ວຍການຊ່ອຍເຫຼືອກັນແລະກັນໃຫ້ອອກຈາກອາບັດ" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ຕ້ອງອາບັດທຸກກົດ ສົງເພິ່ງສູດສະມະນຸພາດທ່ານ

## ວິທີສູດສະມະນຸພາດ ແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍເພິ່ງສູດສະມະນຸພາດພິກຂຸນັ້ນແນວນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

[໔໒໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳ ກັບເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ພິກຂຸນັ້ນບໍ່ຍອມສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວເພິ່ງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳ ກັບເຮັດຕົວໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ພິກຂຸນັ້ນບໍ່ຍອມສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳ ກັບເຮັດຕົວໃຫ້ເປັນ

ຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້ ພິກຂຸນັ້ນບໍ່ຍອມສະລະເລື້ອງນັ້ນ ສົງສູດສະມະນຸພາດ ພິກຂຸຊື່ນີ້ ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງສູດສະມະນຸພາດ ເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໔໘໗] ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ຯລຯ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ “ເປັນສັງຄາທິເສດ”

## ບົດພາຊະນີ

[໔໘໙] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໐] ໑. ພິກຂຸຍັງບໍ່ຖືກສູດສະມະນຸພາດ

໒. ພິກຂຸຜູ້ຍອມສະລະ

໓. ພິກຂຸວິກົນຈະລິດ

໔. ພິກຂຸຕົ້ນບັນຍັດ

**ທຸບພະຈະສິກຂາບົດທີ ໑໒ ຈົບ**

# ໑໓. ກຸລະທູສະກະສິກຂາບົດ

## ວ່າດ້ວຍພິກຂຸຜູ້ປະທຸດສະຮ້າຍຕະກູນ

### ເລື້ອງພິກຂຸພວກພຣະອັດສະຊິແລະພຣະປຸນັບພະສຸກະ

[໔໓໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ເປັນເຈົ້າຖິ່ນ ເປັນອະລັດຊີຊົ່ວຊາມ ຢູ່ໃນກິຕາຄີຣີຊົນນະບົດ

ພິກຂຸພວກນັ້ນ ປະພຶດບໍ່ເໝາະສົມເຫັນປານນີ້ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ຫົດນ້ຳເອງແດ່ ໃຊ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ ເຮັດມາໄລຕໍ່ກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ໃຫ້ຜູ້ອື່ນເຮັດແດ່

ພິກຂຸພວກນັ້ນນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລຕໍ່ກ້ານ ມາໄລລຽງກ້ານ ດອກໄມ້ຊໍ່ ດອກໄມ້ພຸ່ມ ດອກໄມ້ເຊີດ ດອກໄມ້ພວງ ດອກໄມ້ແຜງປະດັບອົກ ເພື່ອກຸນລະສະຕີ ເພື່ອກຸນລະທິດາ ເພື່ອກຸນລະກຸມາຣີ ເພື່ອສະໃພ້ຂອງຕະກູນ ເພື່ອນາງທາສີໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນພາຊະນະດຽວກັນແດ່ ດື່ມນ້ຳໃນໂອໃບດຽວກັນແດ່ ນັ່ງເທິງອາສະນະດຽວກັນແດ່ ນອນເທິງຕຽງດຽວກັນແດ່ ນອນຮ່ວມເຄື່ອງປູລາດດຽວກັນແດ່ ນອນຄຸມຜ້າຫົ່ມຜືນດຽວກັນແດ່ ນອນຮ່ວມເຄື່ອງປູລາດ ແລະ ຄຸມຜ້າຫົ່ມຮ່ວມກັນແດ່ກັບກຸນລະສະຕີ ກຸນລະທິດາ ກຸນລະກຸມາຣີ ສະໃພ້ຂອງຕະກູນ ຂ້າທາດແມ່ຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນເວລາວິການແດ່ ດື່ມນ້ຳເມົາແດ່ ທັດຊົງດອກໄມ້ຂອງຫອມ ແລະເຄື່ອງລູບໄລ້ແດ່ ຟ້ອນລຳແດ່ ຂັບຮ້ອງແດ່ ເສບດົນຕີແດ່ ເຕັ້ນລຳແດ່ ຟ້ອນລຳກັບແມ່ຍິງຟ້ອນລຳແດ່ ຂັບຮ້ອງກັບແມ່ຍິງຟ້ອນລຳແດ່ ເສບດົນຕີກັບແມ່ຍິງຟ້ອນລຳແດ່ ເຕັ້ນລຳກັບແມ່ຍິງຟ້ອນລຳແດ່ ຟ້ອນລຳກັບແມ່ຍິງຂັບຮ້ອງແດ່ ຂັບຮ້ອງກັບແມ່ຍິງຂັບຮ້ອງແດ່ ເສບດົນຕີກັບແມ່ຍິງຂັບຮ້ອງແດ່ ເຕັ້ນລຳກັບແມ່ຍິງຂັບຮ້ອງແດ່ ຟ້ອນລຳກັບແມ່ຍິງເສບດົນຕີແດ່ ຂັບຮ້ອງກັບແມ່ຍິງເສບດົນຕີແດ່ ເສບດົນຕີກັບແມ່ຍິງເສບດົນຕີແດ່ ເຕັ້ນລຳກັບແມ່ຍິງເສບດົນຕີແດ່ ຟ້ອນລຳກັບແມ່ຍິງເຕັ້ນລຳແດ່ ຂັບຮ້ອງກັບແມ່ຍິງເຕັ້ນລຳແດ່ ເສບດົນຕີກັບແມ່ຍິງເຕັ້ນລຳແດ່ ເຕັ້ນລຳ

ກັບແມ່ຍິງເຕັ້ນລຳແດ່ ຫຼິ້ນໝາກຣຸກແຖວລະ ໘ ຕາແດ່ ແຖວລະ ໑໐ ຕາແດ່ ຫຼິ້ນໝາກເກັບແດ່ ຫຼິ້ນຊິງນາງແດ່ ຫຼິ້ນໝາກເກັບແດ່ ຫຼິ້ນໂຍນບ້ວງແດ່ ຫຼິ້ນໄມ້ຫຶ່ງແດ່ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ແດ່ ຫຼິ້ນສະກາແດ່ ຫຼິ້ນເປົ່າໃບໄມ້ແດ່ ຫຼິ້ນໄຖນ້ອຍ ໆ ແດ່ ຫຼິ້ນປີ້ນຫຼັງກາແດ່ ຫຼິ້ນໝາກປີ່ນແດ່ ຫຼິ້ນຕວງຊາຍດ້ວຍໃບໄມ້ແດ່ ຫຼິ້ນລົດນ້ອຍໆແດ່ ຫຼິ້ນທະນູນ້ອຍໆແດ່ ຫຼິ້ນຂຽນທວາຍແດ່ ຫຼິ້ນທາຍໃຈແດ່ ຫຼິ້ນເປັນຄົນພິການແດ່ ຫັດຂີ່ຊ້າງແດ່ ຫັດຂີ່ມ້າແດ່ ຫັດຂີ່ລົດແດ່ ຫັດຍິງທະນູແດ່ ຫັດຍິງອາວຸດແດ່ ແລນຜັດຊ້າງແດ່ ແລນຜັດມ້າແດ່ ແລນຜັດລົດແດ່ ແລ່ນຂັບກັນແດ່ ແລ່ນອ້ອມຫຼັກແດ່ ຜິວປາກແດ່ ຕົບມືແດ່ ປໍ້າກັນແດ່ ຊົກມວຍແດ່ ປູລາດຜ້າສັງຄາຕິທ່າມກາງເວທີເຕັ້ນລຳແລ້ວເວົ້າກັບແມ່ຍິງຟ້ອນລຳແນວນີ້ວ່າ "ນ້ອງສາວ ເຈົ້າຈົ່ງຟ້ອນລຳໃນທີ່ນີ້" ດັ່ງນີ້ແລ້ວໃຫ້ການຄຳນັບແດ່ ປະພຶດບໍ່ເໝາະສົມຕ່າງ ໆ ແດ່

[໔໓໔] ສະໄໝນັ້ນ ພິກຂຸອົງໜຶ່ງຈຳພັນສາໃນແຄ້ວນກາສີແລ້ວ ເດີນທາງໄປນະຄອນສາວັດຖີເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ເດີນທາງໄປຈົນເຖິງກິຕາຄີຣີຊົນນະບົດ ເມື່ອເວລາເຊົ້າທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນໄປບິນທະບາດທີ່ກິຕາຄີຣີຊົນນະບົດ ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ທີ່ໜ້າເຫຼື້ອມໃສ ສາຍຕາທອດລົງຕ່ຳ ສົມບູນດ້ວຍອິລິຍາບົດ

ພວກຊາວບ້ານເຫັນພິກຂຸນັ້ນແລ້ວພາກັນກ່າວແນວນີ້ວ່າ "ພິກຂຸນີ້ເປັນໃຜ ເບິ່ງຄືບໍ່ມີກຳລັງ ເໝືອນຄົນອ່ອນແອ ເໝືອນຄົນໜ້າຍູ້ກົ້ມໜ້າ ເມື່ອທ່ານອົງນີ້ເຂົ້າໄປບິນທະບາດ ໃຜນໍຈະຖວາຍອາຫານບິນທະບາດ ສ່ວນພຣະອັດສະຊິແລະພຣະປຸນັບພະສຸກະຂອງພວກເຮົາ ເປັນຄົນອ່ອນໂຍນ ເວົ້າມ່ວນ ອ່ອນຫວານ ຍິ້ມແຍ້ມກ່ອນ ມັກກ່າວວ່າມາເທີ້ນແລະມາດີແລ້ວ ບໍ່ກົ້ມໜ້າ ໜ້າຕາຊື່ນບານ ທັກທາຍກ່ອນຜູ້ໃດ ກໍຢາກຈະຖວາຍອາຫານທ່ານເຫຼົ່ານັ້ນ"

ອຸປາສົກຄົນໜຶ່ງເຫັນພິກຂຸນັ້ນກຳລັງບິນທະບາດໃນກິຕາຄີຣີຊົນນະບົດ ເມື່ອແລ້ວໄດ້ເຂົ້າໄປຫາພິກຂຸນັ້ນໄຫວ້ແລ້ວກ່າວກັບທ່ານວ່າ "ຄູບາໄດ້ອາຫານບິນທະບາດແດ່ບໍ່ ຂ້ານ້ອຍ?"

ພິກຂຸນັ້ນຕອບວ່າ "ອາດຕະມາຍັງບໍ່ໄດ້ອາຫານເລີຍ"

ອຸປາສົກກ່າວນິມົນວ່າ "ນິມົນໄປເຮືອນຂ້ານ້ອຍເທີ້ນ" ແລ້ວພາພິກຂຸນັ້ນໄປເຮືອນ ນິມົນໃຫ້ສັນແລ້ວຖາມວ່າ "ຄູບາ ທ່ານຈະໄປໃສ"

ພິກຂຸນັ້ນຕອບວ່າ "ຈະເລີນພອນ ອາດຕະມາຈະໄປນະຄອນສາວັດຖີ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ"

ອຸປາສົກກ່າວວ່າ "ຖ້າເຊັ່ນນັ້ນ ທ່ານຈົ່ງຖວາຍບັງຄົມພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະຂໍຈົ່ງຂາບທູນຕາມຄຳເວົ້າຂອງຂ້ານ້ອຍແນວນີ້ດ້ວຍວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ວັດໃນກິຕາຄີຣີຊົນນະບົດຊຸດໂຊມ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເປັນເຈົ້າຖິ່ນ

ຢູ່ໃນກິຕາຄິຣິຊິນນະບົດ ເປັນພິກຂຸອະລັດຊິຊົ່ວຊາມ ພວກທ່ານປະພຶດບໍ່ເໝາະສົມເຫັນປານນີ້ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ฯລฯ ປະພຶດບໍ່ເໝາະສົມຕ່າງ ໆ ແມ່ນພວກຊາວບ້ານທີ່ເຄີຍສັດທາເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາບໍ່ເຫຼື້ອມໃສ ທານທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ທາຍົກທາຍິກາເຊົາຖວາຍແລ້ວ ພິກຂຸຜູ້ມີສິນພາກັນຈາກໄປ ພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ ຂໍປະທານອະໄຣກາດເທີ້ນ ຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າໂຜດສົ່ງພິກຂຸທັງຫຼາຍໄປກິຕາຄິຣິຊິນນະບົດເພື່ອວັດອັດງາມຈະໄດ້ຕັ້ງໝັ້ນຢູ່ສືບໄປໃນທີ່ນັ້ນ”

ພິກຂຸນັ້ນຮັບຄຳຂອງຂອງອຸປາສົກແລ້ວເດີນທາງໄປທາງນະຄອນສາວັດຖີໄປເຖິງນະຄອນສາວັດຖີ ເຖິງພຣະເຊຕະວັນອາຣາມຂອງອະນາຖະບິນທິກະເສດຖີໂດຍລຳດັບ ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ແລ້ວຖວາຍບັງຄົມພຣະຜູ້ມີພຣະພາກເຈົ້ານັ່ງລົງ ໃນທີ່ສົມຄວນ

## ພຸດທະປະເພນີ

ອັນການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ຊົງປາໄສກັບພຣະອາຄັນຕຸກະທັງຫຼາຍ ນັ້ນເປັນພຸດທະປະເພນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸນັ້ນວ່າ “ພິກຂຸ ທ່ານຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ບໍ? ທ່ານເດີນທາງມາໂດຍບໍ່ລຳບາກແມ່ນບໍ? ທ່ານມາຈາກໃສ”

ພິກຂຸນັ້ນຂາບທູນວ່າ “ສະບາຍດີ ຂ້ານ້ອຍ ພໍເປັນຢູ່ໄດ້ ຂ້ານ້ອຍ ຂ້າພຣະອົງເດີນທາງມາໂດຍບໍ່ລຳບາກ ຂ້ານ້ອຍ ຂ້າພຣະອົງຈຳພັນສາໃນແຄວັນກາສີ ເມື່ອຈະມາເຝົ້າພຣະອົງທີ່ເມືອງນີ້ ເດີນທາງຜ່ານກິຕາຄິຣິຊິນນະບົດ ເວລາເຊົ້າຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນກິຕາຄິຣິຊິນນະບົດ ອຸປາສົກຄົນໜຶ່ງເຫັນຂ້າພຣະອົງກຳລັງທ່ຽວບິນທະບາດ ເຂົ້າມາຫາ ໄຫວ້ແລ້ວຖາມວ່າ “ຄູບາໄດ້ອາຫານບິນທະບາດແດ່ບໍ່ ຂ້ານ້ອຍ” ฯລฯ ເຂົາກ່າວວ່າ “ຄູບາ ຖ້າເຊັ່ນນັ້ນ ຂໍທ່ານຈົ່ງຖວາຍບັງຄົມພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະຂໍຈົ່ງຂາບທູນຕາມຄຳເວົ້າຂອງຂ້ານ້ອຍແບວນີ້ວ່າ “ຂ້າແຕ່ພຣະອົງຜູ້ຈະເລີນ ວັດໃນກິຕາຄິຣິຊິນນະບົດຊຸດໂຊມ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເປັນເຈົ້າຖິ່ນ ຢູ່ໃນກິຕາຄິຣິຊິນນະບົດ ເປັນພິກຂຸອະລັດຊິຊົ່ວຊາມ ພວກທ່ານປະພຶດບໍ່ເໝາະສົມເຫັນປານນີ້ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ฯລฯ ປະພຶດບໍ່ເໝາະສົມຕ່າງ ໆ ແມ່ນພວກຊາວບ້ານທີ່ເຄີຍສັດທາເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາບໍ່ເຫຼື້ອມໃສ ທານທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ທາຍົກທາຍິກາເຊົາຖວາຍແລ້ວ ພິກຂຸຜູ້ມີສິນພາກັນຈາກໄປ ພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ ຂໍປະທານອະໄຣກາດເທີ້ນ ຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າໂຜດສົ່ງພິກຂຸທັງຫຼາຍໄປສູ່ກິຕາຄິຣິຊິນນະບົດເພື່ອວັດອັນງາມຈະໄດ້ຕັ້ງໝັ້ນຢູ່ສືບໄປໃນທີ່ນັ້ນ” ຂ້າພຣະອົງມາຈາກກິຕາຄິຣິຊິນນະບົດນັ້ນ ຂ້ານ້ອຍ”

## ຊົງສອບຖາມແລ້ວຕຳໜິ

[໔໓໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ເປັນເຈົ້າຖິ່ນ ເປັນພິກຂຸອະລັດຊີ ຊົ່ວຊາມ ຢູ່ໃນກີຕາຄີຣີຊົນນະບົດ ປະພຶດບໍ່ເໝາະສົມເຫັນປານນີ້ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ຫົດນ້ຳເອງແດ່ ໃຫ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ ເຮັດມາໄລຕໍ່ກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຯລຯ ປະພຶດບໍ່ເໝາະສົມຕ່າງ ໆ ແມ່ນພວກຊາວບ້ານທີ່ເຄີຍສັດທາເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາບໍ່ເຫຼື້ອມໃສ ທານທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ ທາຍົກທາຍິກາໄດ້ເຊົາຖວາຍແລ້ວ ພິກຂຸຜູ້ມີສີນພາກັນຈາກໄປ ພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ ແມ່ນບໍ?" ພິກຂຸທັງຫຼາຍຂາບທູນວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ຯລຯ ບໍ່ຄວນເຮັດ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງປະພຶດບໍ່ເໝາະສົມແນວນີ້ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ຫົດນ້ຳເອງແດ່ ໃຫ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ ເຮັດມາໄລຕໍ່ກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ຜູ້ອື່ນເຮັດແດ່ ພິກຂຸພວກນັ້ນນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລຕໍ່ກ້ານ ມາໄລລຽງກ້ານ ດອກໄມ້ຊໍ່ ດອກບໍ່ພຸ່ມ ດອກໄມ້ເຊີດ ດອກໄມ້ພວງ ດອກໄມ້ແຜງປະດັບອົກ ເພື່ອກຸນລະສະຕີ ເພື່ອກຸນລະທິດາ ເພື່ອກຸນລະກຸມາຣີ ເພື່ອສະໄພ້ຂອງຕະກູນ ເພື່ອນາງທາສີໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນພາຊະນະດຽວກັນແດ່ ດື່ມນ້ຳໃນໂອໃບດຽວກັນແດ່ ນັ່ງເທິງອາສະນະດຽວກັນແດ່ ນອນເທິງຕຽງດຽວກັນແດ່ ນອນຮ່ວມເຄື່ອງປູລາດດຽວກັນແດ່ ນອນຄຸມຜ້າຫົ່ມຜືນດຽວກັນແດ່ ນອນຮ່ວມເຄື່ອງປູລາດ ແລະ ຄຸມຜ້າຫົ່ມຮ່ວມກັນແດ່ກັບກຸນລະສະຕີ ກຸນລະທິດາ ກຸນລະກຸມາຣີ ສະໄພ້ຂອງຕະກູນ ຂ້າທາດແມ່ຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນເວລາວິການແດ່ ດື່ມນ້ຳເມົາແດ່ ທັດຊົງດອກໄມ້ຂອງຫອມແລະເຄື່ອງລູບໄລ້ແດ່ ຟ້ອນລຳແດ່ ຂັບຮ້ອງແດ່ ເສບດົນຕີແດ່ ເຕັ້ນລຳແດ່ ຟ້ອນລຳກັບແມ່ຍິງຟ້ອນລຳແດ່ ຂັບຮ້ອງກັບແມ່ຍິງຟ້ອນລຳແດ່ ເສບດົນຕີກັບແມ່ຍິງຟ້ອນລຳແດ່ ເຕັ້ນລຳກັບແມ່ຍິງຟ້ອນລຳແດ່ ຟ້ອນລຳກັບແມ່ຍິງຂັບຮ້ອງແດ່ ຂັບຮ້ອງກັບແມ່ຍິງຂັບຮ້ອງແດ່ ເສບດົນຕີກັບ

ແມ່ຍິງຂັບຮ້ອງແດ່ ເຕັ້ນລຳກັບແມ່ຍິງຂັບຮ້ອງແດ່ ຟ້ອນລຳກັບແມ່ຍິງເສບດົນຕີແດ່ ຂັບຮ້ອງກັບແມ່ຍິງເສບດົນຕີແດ່ ເສບດົນຕີກັບແມ່ຍິງເສບດົນຕີແດ່ ເຕັ້ນລຳກັບແມ່ຍິງເສບດົນຕີແດ່ ຟ້ອນລຳກັບແມ່ຍິງເຕັ້ນລຳແດ່ ຂັບຮ້ອງກັບແມ່ຍິງເຕັ້ນລຳແດ່ ເສບດົນຕີກັບແມ່ຍິງເຕັ້ນລຳແດ່ ເຕັ້ນລຳກັບແມ່ຍິງເຕັ້ນລຳແດ່ ຫຼິ້ນໝາກຣຸກແຖວລະ ໘ ຕາແດ່ ແຖວລະ ໑໐ ຕາແດ່ ຫຼິ້ນໝາກເກັບແດ່ ຫຼິ້ນຊີງນາງແດ່ ຫຼິ້ນໝາກເກັບແດ່ ຫຼິ້ນໂຍນບ້ວງແດ່ ຫຼິ້ນໄມ້ຫຶ່ງແດ່ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ແດ່ ຫຼິ້ນສະກາແດ່ ຫຼິ້ນເປົ່າໃບໄມ້ແດ່ ຫຼິ້ນໄຖນ້ອຍ ໆ ແດ່ ຫຼິ້ນປີ້ນຫຼັງກາ ແດ່ ຫຼິ້ນໝາກປີ່ນແດ່ ຫຼິ້ນຕວງຊາຍດ້ວຍໃບໄມ້ແດ່ ຫຼິ້ນລົດນ້ອຍ ໆ ແດ່ ຫຼິ້ນທະນູນ້ອຍໆ ແດ່ ຫຼິ້ນຂຽນທວາຍແດ່ ຫຼິ້ນທາຍໃຈແດ່ ຫຼິ້ນສອນຄົນພິການແດ່ ຫັດຂີ່ຊ້າງແດ່ ຫັດຂີ່ມ້າແດ່ ຫັດຂີ່ລົດແດ່ ຫັດຍິງທະນູແດ່ ຫັດຍິງອາວຸດແດ່ ແລນຜັດຊ້າງແດ່ ແລນຜັດມ້າແດ່ ແລນຜັດລົດແດ່ ແລ່ນຂັບກັນແດ່ ແລ່ນອ້ອມຫຼັກແດ່ ຜິວປາກແດ່ ຕົບມືແດ່ ປ້ຳກັນແດ່ ຊົກມວຍແດ່ ປູລາດຜ້າສັງຄາຕິທ່າມກາງເວທີເຕັ້ນລຳແລ້ວເວົ້າກັບແມ່ຍິງຟ້ອນລຳແນວນີ້ວ່າ "ນ້ອງສາວ ເຈົ້າຈົ່ງຟ້ອນລຳໃນທີ່ນີ້" ດັ່ງນີ້ແລ້ວ ໃຫ້ການຄຳນັບແດ່ ປະພຶດບໍ່ເໝາະສົມຕ່າງ ໆ ແດ່ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ"

## ຮັບສັ່ງໃຫ້ເຮັດປັບພາຊະນີຍະກຳ

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະໂດຍປະການຕ່າງ ໆ ແລ້ວຮັບສັ່ງຮຽກພຣະສາຣີບຸດ ແລະ ພຣະໂມກຄັນລານະມາຕັດວ່າ "ໄປເທີ້ນ ສາຣີບຸດ ໂມກຄັນລານະ ທ່ານທັງສອງຈົ່ງໄປກີຕາຄີຣີຊົນນະບົດ ຈົ່ງເຮັດປັບພາຊະນີຍະກຳ ພິກຂຸຊື່ວ່າອັດສະຊິ ແລະປຸນັບພະສຸກະໄປຈາກກີຕາຄີຣີຊົນນະບົດ ຍ້ອນພິກຂຸພວກນັ້ນເປັນສັດທິວິຫາຣິກຂອງທ່ານທັງສອງ"

ພຣະສາຣີບຸດ ແລະ ພຣະໂມກຄັນລານະຂາບທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈະເຮັດປັບພາຊະນີຍະກຳແກ່ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະໄດ້ແນວໃດ ຍ້ອນພວກທ່ານດຸຮ້າຍ ຫຍາບຄາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າແນວນັ້ນ ທ່ານຈົ່ງໄປກັບພິກຂຸຫຼາຍ ໆ ອົງ"

ພຣະເຖຣະທັງສອງ ທູນຮັບສະໜອງພຣະພຸດທະດຳຣັດແລ້ວ

## ວິທີເຮັດປັບພາຊະນີຍະກຳ ແລະກຳມະວາຈາເຮັດປັບພາຊະນີຍະກຳ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ເພິ່ງເຮັດປັບພາຊະນີຍະກຳແນວນີ້ ເລີ່ມດ້ວຍເພິ່ງໂຈດພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະ ເມື່ອແລ້ວໃຫ້ພວກທ່ານໃຫ້ການ ເມື່ອພວກທ່ານໃຫ້ການແລ້ວຈຶ່ງປັບອາບັດ ເມື່ອປັບອາບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

[໔໓໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະ ໘ ອົງນີ້ ປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງພວກທ່ານ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ແລະ ຕະກູນທັງຫຼາຍທີ່ຖືກພວກທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ຖ້າສົງພ້ອມກັນແລ້ວກໍເພິ່ງເຮັດປັບພາຊະນີຍະກຳພິກຂຸຊື່ວ່າ ອັດສະຊິ ແລະ ປຸນັບພະສຸກະໃຫ້ໄປຈາກກີຕາຄີຣີຊິນນະບົດໂດຍປະກາດວ່າ "ພິກຂຸຊື່ອັດສະຊິ ແລະ ປຸນັບພະສຸກະບໍ່ເພິ່ງຢູ່ໃນກີຕາຄີຣີຊິນນະບົດ" ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຂອງພວກທ່ານ ເຂົາໄດ້ເຫັນ ແລະ ໄດ້ຍິນກັນທົ່ວ ແລະຕະກູນທັງຫຼາຍທີ່ຖືກພວກທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນ ແລະ ໄດ້ຍິນກັນທົ່ວ ສົງເຮັດປັບພາຊະນີຍະກຳພວກທ່ານໄປຈາກກີຕາຄີຣີຊິນນະບົດໂດຍປະກາດວ່າ "ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະ ບໍ່ເພິ່ງຢູ່ໃນກີຕາຄີຣີຊິນນະບົດ" ທ່ານອົງໃດເຫັນດ້ວຍກັບການເຮັດປັບພາຊະນີຍະກຳ ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະໄປຈາກກີຕາຄີຣີຊິນນະບົດໂດຍປະກາດວ່າ "ພິກຂຸຊື່ວ່າອັດສະຊິ ແລະປຸນັບພະສຸກະບໍ່ເພິ່ງຢູ່ໃນກີຕາຄີຣີຊິນນະບົດ" ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ"

ແມ່ນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຯລຯ ທ່ານອົງນັ້ນເພິ່ງທັກທ້ວງ

ປັບພາຊະນີຍະກຳ ໄປຈາກກີຕາຄີຣີຊິນນະບົດ ສົງເຮັດແລ້ວແກ່ພິກຂຸຊື່ວ່າອັດສະຊິ ແລະປຸນັບພະສຸກະໂດຍປະກາດວ່າ "ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະບໍ່ເພິ່ງຢູ່ໃນກີຕາຄີຣີຊິນນະບົດ" ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້"

[໔໓໕] ລຳດັບນັ້ນ ພິກຂຸສົງມີພຣະສາຣີບຸດ ແລະ ພຣະໂມກຄັນລານະເປັນປະທານເດີນທາງໄປກີຕາຄີຣີຊິນນະບົດ ໄດ້ເຮັດປັບພາຊະນີຍະກຳພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະໄປຈາກກີຕາຄີຣີຊິນນະບົດໂດຍປະກາດວ່າ "ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະບໍ່ເພິ່ງຢູ່ໃນ ກີຕາຄີຣີຊິນນະບົດ"

ພິກຂຸພວກນັ້ນຖືກສົງເຮັດປັບພາຊະນີຍະກຳແລ້ວ ກໍຍັງບໍ່ປະພຶດຊອບ ບໍ່ເຊົາຖືໂຕ ບໍ່ປະພຶດກັບຕົວ ບໍ່ຂໍຂະມາພິກຂຸທັງຫຼາຍ ຍັງດ່າຍັງບໍຣິພາດກາຣະກະສົງ ທ່ຽວໃສ່ຄວາມວ່າກາຣະກະສົງລຳອຽງຍ້ອນຄວາມພໍໃຈ ລຳອຽງຍ້ອນຄວາມຂັດເຄືອງ ລຳອຽງຍ້ອນຄວາມຫຼົງ ລຳອຽງຍ້ອນຄວາມຢ້ານ ບັນດາບໍລິວານຂອງພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະ ບາງພວກຫຼີກໄປເລີຍກໍມີ ສິກໄປເລີຍກໍມີ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຊື່ວ່າ ອັດສະຊິ ແລະ ປຸນັບພະສຸກະຖືກສົງເຮັດປັບພາຊະນີຍະກຳແລ້ວ ຈຶ່ງບໍ່ຍອມປະພຶດຊອບ ບໍ່ຫາຍຈອງຫອງ ບໍ່ປະພຶດກັບຕົວ ບໍ່ຂໍຂະມາພິກຂຸທັງຫຼາຍ ຍັງດ່າຍັງບໍຣິພາດກາຣະກະສົງ ທັ່ງວໃສ່ຄວາມວ່າກາຣະກະສົງລຳອຽງຍ້ອນຄວາມພໍໃຈ ລຳອຽງຍ້ອນຄວາມຂັດເຄືອງ ລຳອຽງຍ້ອນຄວາມຫຼົງ ລຳອຽງຍ້ອນຄວາມຢ້ານ ບັນດາບໍລິວານຂອງພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະ ບາງພວກຫຼີກໄປເລີຍກໍມີ ສິກໄປເລີຍກໍມີນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພິກຂຸຊື່ວ່າ ອັດສະຊິ ແລະ ປຸນັບພະສຸກະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸຊື່ວ່າອັດສະຊິ ແລະ ປຸນັບພະສຸກະ ຖືກສົງເຮັດປັບພາຊະນີຍະກຳແລ້ວ ຍັງບໍ່ປະພຶດຊອບ ຯລຯ ສິກໄປກໍມີ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ຯລຯ ບໍ່ຄວນເຮັດ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຖືກສົງລົງປັບພາຊະນີຍະກຳແລ້ວ ຍັງບໍ່ປະພຶດຊອບ ຯລຯ ສິກໄປກໍມີແນວນັ້ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໔໓໖] ກໍ ພິກຂຸຢູ່ອາໄສໝູ່ບ້ານ ຫຼື ນິຄົມແຫ່ງໃດແຫ່ງໜຶ່ງ ປະທຸດສະຮ້າຍຕະກູນ ມີຄວາມປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງທ່ານ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ທ່ານປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງທ່ານ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ທ່ານຈົ່ງອອກຈາກອາວາດນີ້ ຢ່າຢູ່ທີ່ນີ້" ແລະພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ ກໍໂຕ້ຕອບພິກຂຸທັງຫຼາຍວ່າ "ພວກພິກຂຸລຳອຽງຍ້ອນຄວາມພໍໃຈ ລຳອຽງຍ້ອນຄວາມຂັດເຄືອງ ລຳອຽງຍ້ອນຄວາມຫຼົງ ແລະລຳອຽງຍ້ອນຄວາມຢ້ານ ຂັບພິກຂຸບາງອົງ ບໍ່ຂັບບາງອົງ ຍ້ອນອາບັດຢ່າງດຽວກັນ" ພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນແນວນີ້ວ່າ "ທ່ານຢ່າເວົ້າແນວນັ້ນ ພິກຂຸທັງຫຼາຍບໍ່ລຳອຽງຍ້ອນຄວາມພໍໃຈ ບໍ່ລຳອຽງຍ້ອນຄວາມຂັດເຄືອງ ບໍ່ລຳອຽງຍ້ອນຄວາມຫຼົງ ແລະບໍ່ລຳອຽງຍ້ອນຄວາມຢ້ານ ທ່ານປະທຸດສະຮ້າຍຕະກູນ

ປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງທ່ານ ເຂົາໄດ້ເຫັນ ແລະ ໄດ້ຍິນກັນທົ່ວ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ທ່ານຈົ່ງອອກຈາກອາວາດນີ້ ຢ່າຢູ່ທີ່ນີ້" ພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ແນວນີ້ ກໍຍັງຍ້ອງຍໍຢູ່ ແນວນັ້ນ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງສູດສະມະນຸພາດກວ່າຈະຄົບ ໓ ຄັ້ງເພື່ອໃຫ້ ສະລະເລື້ອງນັ້ນ ຖ້າທ່ານກໍາລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງ ສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ເປັນສັງຄາທິເສດ

**ເລື້ອງພິກຂຸພວກພຣະອັດສະຊິແລະພຣະປຸນັບພະສຸກະ ຈົບ**

## ສິກຂາບົດວິພັງ

[໔໓໗] ຄໍາວ່າ ກໍພິກຂຸ ໗ລ໗ ໝູ່ບ້ານຫຼືນິຄົມແຫ່ງໃດແຫ່ງໜຶ່ງ ຄວາມວ່າ ໝູ່ບ້ານກໍດີ ນິຄົມກໍດີ ເມືອງກໍດີ ຊື່ວ່າໝູ່ບ້ານແລະນິຄົມ

ຄໍາວ່າ ຢູ່ອາໄສ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ເນື່ອງໃນໝູ່ບ້ານ ແລະ ນິຄົມນັ້ນ

ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ແລະຕະກູນສູດ

ຄໍາວ່າ ປະທຸດສະຮ້າຍຕະກູນ ຄື ປະທຸດສະຮ້າຍຕະກູນດ້ວຍດອກໄມ້ ໝາກໄມ້ ແປ້ງດິນໜຽວ ໄມ້ສີແຂ້ວ ໄມ້ໄຜ່ ການແພດ ຫຼື ການສື່ສານ

ຄໍາວ່າ ມີຄວາມປະພຶດຊົ່ວຊາມ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ຫົດນໍ້າເອງແດ່ ໃຊ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່

ຄໍາວ່າ ເຂົາໄດ້ເຫັນ ແລະ ໄດ້ຍິນກັນທົ່ວ ຄື ກຸ່ມຊົນທີ່ຢູ່ສະເພາະໜ້າຊື່ວ່າ ໄດ້ເຫັນ ກຸ່ມຊົນທີ່ຢູ່ລັບຫຼັງ ຊື່ວ່າໄດ້ຍິນ

ຄໍາວ່າ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ຄື ເມື່ອກ່ອນຊາວບ້ານມີສັດທາກັບກາຍເປັນຜູ້ບໍ່ມີສັດທາ ເມື່ອກ່ອນເຫຼື້ອມໃສກັບກາຍເປັນຜູ້ບໍ່ເຫຼື້ອມໃສ ຍ້ອນພິກຂຸນັ້ນ

ຄໍາວ່າ ເຂົາໄດ້ເຫັນ ແລະໄດ້ຍິນກັນທົ່ວ ຄື ກຸ່ມຊົນທີ່ຢູ່ສະເພາະໜ້າຊື່ວ່າໄດ້ເຫັນ ກຸ່ມຊົນທີ່ຢູ່ລັບຫຼັງຊື່ວ່າໄດ້ຍິນ

ຄໍາວ່າ ພິກຂຸນັ້ນ ໄດ້ແກ່ ພິກຂຸຜູ້ປະທຸດສະຮ້າຍຕະກູນ

ຄໍາວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ອະທິບາຍວ່າ ພິກຂຸຜູ້ໄດ້ເຫັນ ຜູ້ໄດ້ຍິນເພິ່ງວ່າກ່າວຕັກເຕືອນພິກຂຸຜູ້ປະທຸດສະຮ້າຍຕະກູນວ່າ "ທ່ານປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງທ່ານ ເຂົາ

ໄດ້ເຫັນແລະໄດ້ຍິນກັນທົ່ວ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ທ່ານຈົ່ງອອກຈາກອາວາດນີ້ ຢ່າຢູ່ທີ່ນີ້"

ພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນ ກໍໂຕ້ຕອບພິກຂຸທັງຫຼາຍວ່າ "ພວກພິກຂຸລຳອຽງຍ້ອນຄວາມພໍໃຈ ລຳອຽງຍ້ອນຄວາມຂັດເຄືອງ ລຳອຽງຍ້ອນຄວາມຫຼົງ ລຳອຽງຍ້ອນຄວາມຢ້ານ ຂັບພິກຂຸບາງອົງ ບໍ່ຂັບບາງອົງ ຍ້ອນອາບັດຢ່າງດຽວກັນ"

ຄຳວ່າ ພິກຂຸນັ້ນ ໄດ້ແກ່ ພິກຂຸຜູ້ທີ່ຖືກລົງໂທດນັ້ນ

ຄຳວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ອະທິບາຍວ່າ ພິກຂຸຜູ້ໄດ້ເຫັນ ຜູ້ໄດ້ຍິນເພິ່ງວ່າກ່າວຕັກເຕືອນພິກຂຸຜູ້ປະທຸດສະຮ້າຍຕະກູນວ່າ "ທ່ານຢ່າເວົ້າແນວນັ້ນ ພິກຂຸທັງຫຼາຍບໍ່ລຳອຽງຍ້ອນຄວາມພໍໃຈ ບໍ່ລຳອຽງຍ້ອນຄວາມຂັດເຄືອງ ບໍ່ລຳອຽງຍ້ອນຄວາມຫຼົງ ບໍ່ລຳອຽງຍ້ອນຄວາມຢ້ານ ທ່ານປະທຸດສະຮ້າຍຕະກູນປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງທ່ານ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ທ່ານຈົ່ງອອກຈາກອາວາດນີ້ ຢ່າຢູ່ທີ່ນີ້" ເພິ່ງວ່າກ່າວຕັກເຕືອນແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍໄດ້ຍິນແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງຄຸມຕົວມາສູ່ທ່າມກາງສົງວ່າກ່າວຕັກເຕືອນວ່າ "ທ່ານຢ່າເວົ້າແນວນັ້ນ ພິກຂຸທັງຫຼາຍບໍ່ລຳອຽງຍ້ອນຄວາມພໍໃຈ ບໍ່ລຳອຽງຍ້ອນຄວາມຂັດເຄືອງ ບໍ່ລຳອຽງຍ້ອນຄວາມຫຼົງ ບໍ່ລຳອຽງຍ້ອນຄວາມຢ້ານ ທ່ານປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງທ່ານ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ຕະກູນທັງຫຼາຍທີ່ທ່ານປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ທ່ານຈົ່ງອອກຈາກອາວາດນີ້ ຢ່າຢູ່ທີ່ນີ້" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ສົງເພິ່ງສູດສະມະນຸພາດແກ່ທ່ານ

## ວິທີສູດສະມະນຸພາດ ແລະກຳມະວາຈາສູດສະມະນຸພາດ

ສົງເພິ່ງສູດສະມະນຸພາດພິກຂຸນັ້ນແນວນີ້ ຄື ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ວ່າ

[໔໓໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ ຖືກສົງເຮັດປັບພາຊະນີຍະກຳແລ້ວໃສ່ຄວາມພິກຂຸທັງຫຼາຍວ່າມີຄວາມລຳອຽງຍ້ອນຄວາມພໍໃຈ ມີຄວາມລຳອຽງຍ້ອນຄວາມຂັດເຄືອງ ມີຄວາມລຳອຽງຍ້ອນຄວາມຫຼົງ ມີຄວາມລຳອຽງຍ້ອນຄວາມຢ້ານ ພິກຂຸນັ້ນບໍ່ຍອມສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວກໍເພິ່ງສູດສະມະນຸພາດພິກຂຸຊື່ນີ້ ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຖືກສົງເຮັດປັບພາຊະນີຍະກຳແລ້ວໃສ່ຄວາມພິກຂຸທັງຫຼາຍວ່າ ມີຄວາມລຳອຽງຍ້ອນຄວາມພໍໃຈ ມີຄວາມລຳອຽງຍ້ອນຄວາມຂັດເຄືອງ ມີຄວາມລຳອຽງຍ້ອນຄວາມຫຼົງ ມີຄວາມລຳອຽງຍ້ອນຄວາມຢ້ານ ພິກຂຸນັ້ນບໍ່ຍອມສະລະເລື້ອງນັ້ນ ສົງສູດສະມະນຸພາດທ່ານເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໒ ຯລຯ ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໓ ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຯລຯ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງສູດສະມະນຸພາດແລ້ວເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້

[໔໓໙] ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ຄຳວ່າ ເປັນສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ປະຣິວາດ ດຶງເຂົ້າຫາອາບັດເກົ່າ ໃຫ້ມານັດແລະຮຽກເຂົ້າໝູ່ ຄະນະເຮັດບໍ່ໄດ້ ພິກຂຸອົງດຽວກໍເຮັດບໍ່ໄດ້ ດັ່ງນັ້ນຈຶ່ງຕັດວ່າ “ເປັນສັງຄາທິເສດ”

ຄຳວ່າ ເປັນສັງຄາທິເສດ ນັ້ນ ເປັນການຂະໜານນາມ ເປັນຄຳຮຽກໝວດອາບັດນັ້ນໂດຍອ້ອມນັ້ນເອງ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ “ເປັນສັງຄາທິເສດ”

## ບົດພາຊະນີ

[໔໔໐] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໔໑] ໑. ພິກຂຸຍັງບໍ່ຖືກສູດສະມະນຸພາດ
໒. ພິກຂຸຜູ້ຍອມສະລະ
໓. ພິກຂຸວິກົນຈະລິດ
໔. ພິກຂຸຕົ້ນບັນຍັດ

**ກຸລະທູສະກະສິກຂາບົດທີ ໑໓ ຈົບ**

## ບົດສະຫຼຸບ

[໔໔໒] ທ່ານທັງຫຼາຍ ທໍາຄືສັງຄາທິເສດ ໑໓ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຄື ໙ ສິກຂາບົດທໍາອິດຕ້ອງອາບັດໃນຂະນະທີ່ລ່ວງລະເມີດຢ່າງແນ່ນອນ ໔ ສິກຂາບົດຫຼັງຕ້ອງອາບັດເມື່ອສູດສະມະນຸພາດຄົບ ໓ ຄັ້ງ ພິກຂຸຕ້ອງອາບັດຂໍ້ໃດຂໍ້ໜຶ່ງແລ້ວ ຮູ້ຢູ່ແຕ່ປົກປິດໄວ້ສິ້ນຈໍານວນວັນເທົ່າໃດ ພິກຂຸນັ້ນເພິ່ງຢູ່ປະຣິວາດດ້ວຍຄວາມບໍ່ປາຖະໜາສິ້ນວັນເທົ່ານັ້ນ ພິກຂຸຢູ່ປະຣິວາດແລ້ວຕ້ອງປະພຶດວັດເພື່ອມານັດສໍາລັບພິກຂຸເພີ່ມຂຶ້ນອີກ ໖ ຣາຕີ ພິກຂຸຜູ້ປະພຶດມານັດແລ້ວຖືກສົງຮຽກເຂົ້າໝູ່ໃນສີມາມີພິກຂຸສົງ ໒໐ ອົງ ຖ້າພິກຂຸສົງ ໒໐ ອົງ ຂາດໄປແມ່ນພຽງ ໑ ອົງ ຮຽກພິກຂຸນັ້ນເຂົ້າໝູ່ ພິກຂຸນັ້ນບໍ່ເປັນອັນສົງຮຽກເຂົ້າໝູ່ ແລະພິກຂຸເຫຼົ່ານັ້ນຄວນຖືກຕໍາໜິ ນີ້ເປັນການເຮັດທີ່ສົມຄວນໃນກໍານັ້ນ

ຂ້າພະເຈົ້າຂໍຖາມທ່ານທັງຫຼາຍໃນທໍາຄືສັງຄາທິເສດ ໑໓ ສິກຂາບົດນັ້ນວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ທ່ານທັງຫຼາຍບໍລິສຸດແລ້ວໃນທໍາຄືສັງຄາທິເສດ ໑໓ ສິກຂາບົດນີ້ ຍ້ອນດັ່ງນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ເຕຣະສະກັນ ຈົບ**

## ລວມສິກຂາບົດທີ່ມີໃນສັງຄາທິເສດກັນ

## ສັງຄາທິເສດກັນມີ ໑໓ ສິກຂາບົດ ຄື

| | |
|---|---|
| ໑. ສຸກກະວິສັດຖິສິກຂາບົດ | ວ່າດ້ວຍການຈົງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ |
| ໒. ກາຍະສັງສັກຄະສິກຂາບົດ | ວ່າດ້ວຍການຈັບຕ້ອງກາຍກັບມາຕຸຄາມ |
| ໓. ທຸດຖຸນລະວາຈາສິກຂາບົດ | ວ່າດ້ວຍການເວົ້າກ້ຽວແມ່ຍິງ |
| ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ | ວ່າດ້ວຍການໃຫ້ບຳເລີຄວາມຕ້ອງການຂອງຕົນ |
| ໕. ສັນຈະຣິດຕະສິກຂາບົດ | ວ່າດ້ວຍການເປັນສື່ |
| ໖. ກຸຕິກາຣະສິກຂາບົດ | ວ່າດ້ວຍການກໍ່ສ້າງກຸຕິ |
| ໗. ວິຫາຣະກາຣະສິກຂາບົດ | ວ່າດ້ວຍການສ້າງວິຫານ |
| ໘. ປະຖົມທຸດຖະໂທສະສິກຂາບົດ | ວ່າດ້ວຍພິກຂຸຂັດເຄືອງມີໂທສະ ສິກຂາບົດທີ ໑ |
| ໙. ທຸຕິຍະທຸດຖະໂທສະສິກຂາບົດ | ວ່າດ້ວຍພິກຂຸຂັດເຄືອງມີໂທສະ ສິກຂາບົດທີ ໒ |
| ໑໐. ສັງຄະເພທະສິກຂາບົດ | ວ່າດ້ວຍການເຮັດສົງໃຫ້ແຕກກັນ |
| ໑໑. ສັງຄະເພທະນຸວັດຕະກະສິກຂາບົດ | ວ່າດ້ວຍພິກຂຸປະພຶດຕາມ ແລະກ່າວສະນັບສະໜູນພິກຂຸຜູ້ເຮັດສົງໃຫ້ແຕກກັນ |
| ໑໒. ທຸບພະຈະສິກຂາບົດ | ວ່າດ້ວຍພິກຂຸເປັນຄົນວ່າຍາກ |
| ໑໓. ກຸລະທູສະກະສິກຂາບົດ | ວ່າດ້ວຍພິກຂຸຜູ້ປະທຸດສະຮ້າຍຕະກູນ |

**ສັງຄາທິເສດກັນ ຈົບ**

# ໓. ອະນິຍະຕະກັນ

ທ່ານທັງຫຼາຍ ທຳຄືອະນິຍະຕະ ໒ ສິກຂາບົດເຫຼົ່ານີ້ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ

## ໑. ປະຖົມອະນິຍະຕະສິກຂາບົດ

## ວ່າດ້ວຍການນັ່ງໃນທີ່ລັບຕາກັບແມ່ຍິງສອງຕໍ່ສອງ

### ເລື້ອງພຣະອຸທາຍີ

[໔໔໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະອຸທາຍີເປັນພຣະປະຈຳຕະກູນໃນນະຄອນສາວັດຖີ ໄປມາຫາສູ່ຕະກູນທັງຫຼາຍ ສະໄໝນັ້ນ ແມ່ຍິງຕະກູນອຸປັດຖາກຂອງພຣະອຸທາຍີອັນມານດາບິດາໄດ້ຍົກໃຫ້ຊາຍໜຸ່ມຕະກູນໜຶ່ງ ເວລາເຊົ້າວັນໜຶ່ງ ພຣະອຸທາຍີຄອງອັນຕະຣະວາສົກ ຖືບາດແລະຈີວອນໄປທີ່ຕະກູນນັ້ນ ເມື່ອເຖິງແລ້ວຖາມຊາວບ້ານວ່າ “ແມ່ຍິງຊື່ນີ້ໄປໃສ”

ຊາວບ້ານຕອບວ່າ “ເຂົາຍົກໃຫ້ຊາຍໜຸ່ມຕະກູນນັ້ນໄປແລ້ວ ຂ້ານ້ອຍ”

ຕະກູນນັ້ນກໍເປັນອຸປັດຖາກຂອງພຣະອຸທາຍີ ທ່ານຈຶ່ງໄປທີ່ນັ້ນຖາມວ່າ “ແມ່ຍິງຊື່ນີ້ຢູ່ໃສ”

ຊາວບ້ານຕອບວ່າ “ນາງນັ່ງຢູ່ໃນຫ້ອງຂ້ານ້ອຍ”

ພຣະອຸທາຍີເຂົ້າໄປຫາແມ່ຍິງສາວນັ້ນ ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ ເຈຣະຈາ ກ່າວທຳເໝາະແກ່ການກັບແມ່ຍິງສາວນັ້ນສອງຕໍ່ສອງ

### ນາງວິສາຂາມິຄາຣະມາຕາຕຳໜິພຣະອຸທາຍີ

ສະໄໝນັ້ນ ນາງວິສາຂາມິຄາຣະມາຕາ ມີບຸດຫຼານຫຼາຍ ມີບຸດຫຼານລ້ວນບໍ່ມີໂຣກ ໄດ້ຮັບຍ້ອງຍໍວ່າເປັນມິ່ງມຸງຄຸນ ພວກຊາວບ້ານເຊີນນາງວິສາຂາໄປບໍລິໂພກເປັນຄົນທຳອິດໃນງານບຸນງານມະໂຫລະສົບ ງານສະຫຼອງ ນາງວິສາຂາມິຄາຣະມາຕາໄດ້ຮັບເຊີນໄປສູ່ຕະກູນນັ້ນ ນາງໄດ້ເຫັນພຣະອຸທາຍີນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບແມ່ຍິງສາວ ເມື່ອເຫັນແລ້ວຈຶ່ງກ່າວກັບພຣະອຸທາຍີວ່າ “ຄູບາ ການທີ່ທ່ານນັ່ງເທິງອາສະນະທີ່ກຳບັງໃນທີ່ລັບ ພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງເຊັ່ນນີ້ ບໍ່ເໝາະ ບໍ່ສົມຄວນ ທ່ານບໍ່ປາຖະໜາດ້ວຍທຳນັ້ນກໍຈິງ ເຖິງແນວນັ້ນ ຊາວບ້ານທີ່ຍັງບໍ່ເຫຼື້ອມໃສກໍເຮັດໃຫ້ເຊື່ອຍາກ”

ພຣະອຸທາຍີ ແມ່ນຖືກນາງວິສາຂາວ່າກ່າວຕັກເຕືອນກໍບໍ່ເຊື່ອ
ນາງວິສາຂາຈຶ່ງອອກໄປບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອຸທາຍີ ຈຶ່ງນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງແນວນັ້ນບໍ" ເມື່ອພິກຂຸທັງຫຼາຍຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງ ແມ່ນບໍ?" ທ່ານທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມ ສອງຕໍ່ສອງແນວນັ້ນບໍ ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໔໔໔] **ກໍ ພິກຂຸໃດ ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງ ອຸປາສິກາມີວາຈາເຊື່ອຖືໄດ້ ໄດ້ເຫັນພິກຂຸນັ່ງກັບມາຕຸຄາມນັ້ນແລ້ວກ່າວໂທດດ້ວຍອາບັດຢ່າງໃດຢ່າງໜຶ່ງ ໃນບັນດາອາບັດ ໓ ຢ່າງ ຄື ປາຣາຊິກ ສັງຄາທິເສດ ຫຼື ປາຈິດຕີ ພິກຂຸນັ້ນຍອມຮັບການນັ່ງ ເພິ່ງຖືກປັບດ້ວຍອາບັດຢ່າງໃດຢ່າງໜຶ່ງ ບັນດາອາບັດ ໓ ຢ່າງ ຄື ປາຣາຊິກ ສັງຄາທິເສດ ຫຼືປາຈິດຕີ ອີກຢ່າງໜຶ່ງ ອຸປາສິກາຜູ້ມີວາຈາເຊື່ອຖືໄດ້ນັ້ນ ກາວໂທດດ້ວຍອາບັດໃດ ພິກຂຸນັ້ນເພິ່ງຖືກປັບດ້ວຍອາບັດນັ້ນ ອາບັດນີ້ຊື່ວ່າ ອະນິຍະຕະ**

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໔໔໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ແມ່ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແມ່ຍິງມະນຸດນັ້ນໂດຍທີ່ສຸດແມ່ນແຕ່ເດັກແມ່ຍິງເຊິ່ງເກີດໃນວັນນັ້ນ ແມ່ຍິງໃຫຍ່ກວ່ານີ້ບໍ່ຕ້ອງເວົ້າຮອດ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ໄດ້ແກ່ ພິກຂຸກັບມາຕຸຄາມ

ທີ່ຊື່ວ່າ ທີ່ລັບ ໄດ້ແກ່ ທີ່ລັບຕາແລະລັບຫູ ທີ່ຊື່ວ່າ ທີ່ລັບຕາ ໝາຍເຖິງ ທີ່ເຊິ່ງເມື່ອບຸກຄົນກະພິບຕາ ຍັກຄິ້ວ ຫຼື ຍືດຄໍຂຶ້ນ ຜູ້ໃດ ກໍບໍ່ສາມາດແນມເຫັນໄດ້ ທີ່ຊື່ວ່າ ທີ່ລັບຫູ ໝາຍເຖິງ ທີ່ເຊິ່ງບໍ່ມີໃຜສາມາດໄດ້ຍິນຄຳເວົ້າທີ່ເວົ້າກັນຕາມປົກກະຕິໄດ້

ອາສະນະທີ່ຊື່ວ່າ ທີ່ກຳບັງ ຄື ອາສະນະທີ່ກຳບັງດ້ວຍຝາ ບານປະຕູ ສາດລຳແພນມ່ານ ຕົ້ນໄມ້ ເສົາ ຫຼື ກຳແພງຢ່າງໃດຢ່າງໜຶ່ງ

ຄຳວ່າ ພໍຈະກະທຳການໄດ້ ຄື ອາດຈະເສບເມຖຸນທຳກັນໄດ້

ຄຳວ່າ ນັ່ງ ໝາຍຄວາມວ່າ ເມື່ອມາຕຸຄາມນັ່ງ ພິກຂຸນັ່ງໃກ້ ຫຼື ນອນໃກ້ ເມື່ອພິກຂຸນັ່ງມາຕຸຄາມນັ່ງໃກ້ ຫຼື ນອນໃກ້ ຫຼື ນັ່ງທັງສອງຄົນ ຫຼື ນອນທັງສອງຄົນ

ທີ່ຊື່ວ່າ ມີວາຈາເຊື່ອຖືໄດ້ ຖື ແມ່ຍິງຜູ້ບັນລຸຜົນ ຜູ້ຕັດສະຣູ້ທຳ ຜູ້ເຂົ້າໃຈສາດສະໜາດີ

ຊື່ວ່າ ອຸປາສິກາ ໄດ້ແກ່ ແມ່ຍິງຜູ້ຖືພຣະພຸດເປັນສະຣະນະ ຖືພຣະທຳເປັນສະຣະນະເຖິງພຣະສົງເປັນສະຣະນະ

ຄຳວ່າ ໄດ້ເຫັນ ຄື ໄດ້ພົບເຫັນຕໍ່ໜ້າ

ອຸປາສິກາມີວາຈາເຊື່ອຖືໄດ້ ກ່າວໂທດດ້ວຍອາບັດຢ່າງໃດຢ່າງໜຶ່ງ ບັນດາ ອາບັດ ໓ ຢ່າງ ຄື ປາຣາຊິກ ສັງຄາທິເສດ ຫຼື ປາຈິດຕີ ພິກຂຸຍອມຮັບການນັ່ງ ເພິ່ງຖືກປັບ ອາບັດຢ່າງໃດຢ່າງໜຶ່ງ ບັນດາອາບັດ ໓ ຢ່າງ ຄື ປາຣາຊິກ ສັງຄາທິເສດ ຫຼື ປາຈິດຕີ ອີກປະການໜຶ່ງ ອຸປາສິກາຜູ້ມີວາຈາເຊື່ອຖືນັ້ນກ່າວໂທດດ້ວຍອາບັດໃດ ພິກຂຸນັ້ນເພິ່ງຖືກປັບດ້ວຍອາບັດນັ້ນ

## ບົດພາຊະນີ

## ປະຕິນຍາຕະກະຣະນະ ໔

## ເຫັນກຳລັງນັ່ງເສບເມຖຸນ

[໔໔໖] ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນັ່ງເສບເມຖຸນກັບມາຕຸຄາມ" ແລະພິກຂຸນັ້ນກໍຍອມຮັບການນັ່ງນັ້ນ ເພິ່ງປັບຕາມອາບັດ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນັ່ງເສບເມຖຸນກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມານັ່ງແທ້ ແຕ່ບໍ່ໄດ້ເສບເມຖຸນທຳ" ເພິ່ງປັບອາບັດຍ້ອນນັ່ງ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນັ່ງເສບເມຖຸນກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມາບໍ່ໄດ້ນັ່ງ ແຕ່ນອນ" ເພິ່ງປັບອາບັດຍ້ອນນອນ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນັ່ງເສບເມຖຸນກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມາບໍ່ໄດ້ນັ່ງ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນກຳລັງນອນເສບເມຖຸນ

[໔໔ກ] ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນອນເສບເມຖຸນກັບມາຕຸຄາມ" ແລະ ພິກຂຸນັ້ນຍອມຮັບການນອນນັ້ນ ເພິ່ງປັບຕາມອາບັດ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນອນເສບເມຖຸນກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມານອນແທ້ ແຕ່ບໍ່ໄດ້ເສບເມຖຸນ" ເພິ່ງປັບອາບັດຍ້ອນນອນ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນອນເສບເມຖຸນກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມາບໍ່ໄດ້ນອນ ແຕ່ນັ່ງຢູ່" ເພິ່ງປັບອາບັດຍ້ອນນັ່ງ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນອນເສບເມຖຸນກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມາບໍ່ໄດ້ນອນ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນກຳລັງນັ່ງຈັບຕ້ອງກາຍ

[໔໔ຂ] ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍ ເຫັນຄູບາກຳລັງນັ່ງຈັບຕ້ອງກາຍກັບມາຕຸຄາມ" ແລະພິກຂຸນັ້ນຍອມຮັບການນັ່ງນັ້ນ ເພິ່ງປັບຕາມອາບັດ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນັ່ງຈັບຕ້ອງກາຍກັບມາຕຸຄາມ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມານັ່ງແທ້ ແຕ່ບໍ່ໄດ້ຈັບຕ້ອງກາຍ" ເພິ່ງປັບອາບັດຍ້ອນການນັ່ງ ຯລຯ "ອາດຕະມາບໍ່ໄດ້ນັ່ງ ແຕ່ນອນຢູ່" ເພິ່ງປັບອາບັດຍ້ອນນອນ ຯລຯ "ອາດຕະມາບໍ່ໄດ້ນັ່ງ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນກຳລັງນອນຈັບຕ້ອງກາຍ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍ ເຫັນຄູບາກຳລັງນອນຈັບຕ້ອງກາຍກັບມາຕຸຄາມ" ແລະພິກຂຸນັ້ນຍອມຮັບການນອນນັ້ນ ເພິ່ງປັບຕາມອາບັດ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບາກຳລັງນອນຈັບຕ້ອງກາຍກັບມາຕຸຄາມ" ຖ້າພິກຂຸກ່າວແນວນີ້ວ່າ "ອາດຕະມານອນແທ້ ແຕ່ບໍ່ໄດ້ຈັບຕ້ອງກາຍ" ເພິ່ງປັບອາບັດຍ້ອນນອນ ຯລຯ "ອາດຕະມາບໍ່ໄດ້ນອນແຕ່ນັ່ງຢູ່" ເພິ່ງປັບອາບັດຍ້ອນນັ່ງ ຯລຯ "ອາດຕະມາບໍ່ໄດ້ນອນ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນນັ່ງໃນທີ່ລັບ

[໔໔໙] ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບານັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງ" ແລະພິກຂຸນັ້ນຍອມຮັບການນັ່ງນັ້ນ ເພິ່ງປັບອາບັດຍ້ອນນັ່ງ ຯລຯ "ອາດຕະມາບໍ່ໄດ້ນັ່ງ ແຕ່ນອນຢູ່" ເພິ່ງປັບອາບັດຍ້ອນນອນ ຯລຯ "ອາດຕະມາບໍ່ໄດ້ນັ່ງ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນນອນໃນທີ່ລັບ

[໔໕໐] ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບານອນເທິງອາສະໃນທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງ" ແລະພິກຂຸນັ້ນຍອມຮັບການນອນນັ້ນ ເພິ່ງປັບອາບັດຍ້ອນນອນ ຯລຯ "ອາດຕະມາບໍ່ໄດ້ນອນ ແຕ່ນັ່ງຢູ່" ເພິ່ງປັບອາບັດ ຍ້ອນນັ່ງ ຯລຯ "ອາດຕະມາບໍ່ໄດ້ນອນ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

ຄຳວ່າ ອະນິຍະຕະ ຄື ບໍ່ແນ່ວ່າຈະເປັນປາຣາຊິກ ເປັນສັງຄາທິເສດ ຫຼື ເປັນປາຈິດຕີ

[໔໕໑] ພິກຂຸຍອມຮັບການໄປ ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸຍອມຮັບການໄປ ບໍ່ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸຍອມຮັບການໄປ ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ເພິ່ງປັບອາບັດຍ້ອນນັ່ງ
ພິກຂຸຍອມຮັບການໄປ ບໍ່ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ບໍ່ເພິ່ງປັບອາບັດ
ພິກຂຸບໍ່ຍອມຮັບການໄປ ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸບໍ່ຍອມຮັບການໄປ ບໍ່ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸບໍ່ຍອມຮັບການໄປ ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ເພິ່ງປັບອາບັດຍ້ອນນັ່ງ
ພິກຂຸບໍ່ຍອມຮັບການໄປ ບໍ່ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ບໍ່ເພິ່ງປັບອາບັດ

**ປະຖົມອະນິຍະຕະສິກຂາບົດ ຈົບ**

# ໔. ທຸຕິຍະອະນິຍະຕະສິກຂາບົດ

## ວ່າດ້ວຍການນັ່ງໃນທີ່ລັບຫູກັບແມ່ຍິງສອງຕໍ່ສອງ

### ເລື້ອງພຣະອຸທາຍີ

[໔໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະອຸທາຍີຄິດວ່າ “ພຣະຜູ້ມີພຣະພາກເຈົ້າຊົງຫ້າມການນັ່ງເທິງອາສະນະທີ່ກຳບັງໃນທີ່ລັບພໍຈະກະທຳການໄດ້ກັບມາຕຸຄາມສອງຕໍ່ສອງ” ຈຶ່ງນັ່ງເຈຣະຈາ ກ່າວທຳເໝາະແກ່ການກັບແມ່ຍິງສາວຄົນເດີມ

### ນາງວິສາຂາມິຄາຣະມາຕາຕຳໜິພຣະອຸທາຍີ

ແມ່ນຄັ້ງທີ ໔ ນາງວິສາຂາມິຄາຣະມາຕາໄດ້ຮັບເຊີນໄປສູ່ຕະກູນນັ້ນ ໄດ້ເຫັນທ່ານພຣະອຸທາຍີນັ່ງໃນທີ່ລັບກັບແມ່ຍິງສາວສອງຕໍ່ສອງ ຈຶ່ງກ່າວກັບພຣະອຸທາຍີວ່າ “ຄູບາ ການທີ່ທ່ານນັ່ງໃນທີ່ລັບກັບແມ່ຍິງສາວເຊັ່ນນີ້ ບໍ່ເໝາະ ບໍ່ສົມຄວນ ທ່ານບໍ່ປາຖະໜາເມຖຸນກໍຈິງ ເຖິງແນວນັ້ນຊາວບ້ານທີ່ຍັງບໍ່ເຫຼື້ອມໃສກໍຈະເຮັດໃຫ້ເຊື່ອຍາກ”

ພຣະອຸທາຍີຖືກນາງວິສາຂາວ່າກ່າວຕັກເຕືອນກໍບໍ່ເຊື່ອ
ນາງວິສາຂາຈຶ່ງອອກໄປບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພຣະອຸທາຍີຈຶ່ງນັ່ງໃນທີ່ລັບກັບແມ່ຍິງສາວສອງຕໍ່ສອງນໍ” ເມື່ອພິກຂຸທັງຫຼາຍຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອຸທາຍີວ່າ “ອຸທາຍີ ໄດ້ຂ່າວວ່າ ທ່ານນັ່ງໃນທີ່ລັບກັບແມ່ຍິງສາວສອງຕໍ່ສອງແມ່ນບໍ?” ທ່ານທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງນັ່ງໃນທີ່ລັບກັບແມ່ຍິງສາວສອງຕໍ່ສອງນໍ ໂມຄະບຸຣຸດ ການກະທຳ ຢ່າງນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໔໕໓] **ກໍ ສະຖານທີ່ບໍ່ແມ່ນອາສະນະທີ່ກຳບັງ ບໍ່ພໍຈະກະທຳການໄດ້ ແຕ່ເປັນສະຖານທີ່ພໍຈະເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບໄດ້ ກໍພິກຂຸໃດນັ່ງເທິງອາສະນະເຊັ່ນນັ້ນ ໃນທີ່ລັບກັບມາຕຸຄາມສອງຕໍ່ສອງ ອຸປາສິກາມີວາຈາເຊື່ອຖືໄດ້ ໄດ້ເຫັນພິກຂຸນັ່ງກັບ ມາຕຸຄາມນັ້ນແລ້ວກ່າວໂທດດ້ວຍອາບັດຢ່າງໃດຢ່າງໜຶ່ງ ບັນດາອາບັດ ໒ ຢ່າງ ຄື ສັງຄາທິເສດ ຫຼື ປາຈິດຕີ ພິກຂຸຍອມຮັບການນັ່ງ ເພິ່ງຖືກປັບດ້ວຍອາບັດຢ່າງໃດຢ່າງໜຶ່ງ ບັນດາອາບັດ ໒ ຢ່າງ ຄືສັງຄາທິເສດ ຫຼື ປາຈິດຕີ ອີກຢ່າງໜຶ່ງ ອຸປາສິກາຜູ້ມີວາຈາເຊື່ອຖືໄດ້ນັ້ນກ່າວໂທດດ້ວຍອາບັດໃດ ພິກຂຸນັ້ນເພິ່ງຖືກປັບດ້ວຍອາບັດນັ້ນ ອາບັດນີ້ຊື່ວ່າ ອະນິຍະຕະ**

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໔໕໔] ຄຳວ່າ ກໍ ສະຖານທີ່ບໍ່ແມ່ນອາສະນະທີ່ກຳບັງ ອະທິບາຍວ່າ ອາສະນະເປີດເຜີຍຄືທີ່ບໍ່ໄດ້ກຳບັງດ້ວຍຝາ ບານປະຕູ ສາດລຳແພນ ມ່ານບັງ ຕົ້ນໄມ້ ເສົາຫຼືພ້ອມຢ່າງໃດຢ່າງໜຶ່ງ

ຄຳວ່າ ບໍ່ພໍຈະກະທຳການໄດ້ ຄື ບໍ່ອາດຈະເສບເມຖຸນກັນໄດ້

ຄຳວ່າ ແຕ່ເປັນສະຖານທີ່ພໍຈະເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບໄດ້ ຄື ອາດເວົ້າກ້ຽວມາຕຸຄາມດ້ວຍຄຳຊົ່ວຫຍາບ

ຄຳວ່າ ກໍ ຫລຍ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫລຍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ກໍ ຫລຍ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫລຍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ເທິງອາສະນະເຊັ່ນນັ້ນ ຄື ເທິງອາສະນະເຫັນປານນັ້ນ

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ແມ່ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແຕ່ເປັນແມ່ຍິງທີ່ຮູ້ດຽງສາ ສາມາດເຂົ້າໃຈຄຳເວົ້າສຸພາສິດ ທຸບພາສິດ ຄຳຫຍາບແລະຄຳສຸພາບ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ໄດ້ແກ່ ພິກຂຸກັບມາຕຸຄາມ

ທີ່ຊື່ວ່າ ທີ່ລັບ ໄດ້ແກ່ ທີ່ລັບຕາແລະລັບຫູ ທີ່ຊື່ວ່າ ທີ່ລັບຕາ ໝາຍເຖິງ ສະຖານທີ່ເຊິ່ງເມື່ອບຸກຄົນກະພິບຕາ ຍັກຄິ້ວ ຫຼື ຍິດຄໍຂຶ້ນ ຜູ້ໃດ ກໍບໍ່ສາມາດເຫັນໄດ້ ທີ່ຊື່ວ່າ ທີ່ລັບຫູ ໝາຍເຖິງ ທີ່ເຊິ່ງບໍ່ມີໃຜສາມາດໄດ້ຍິນຄຳເວົ້າທີ່ເວົ້າກັນຕາມປົກກະຕິໄດ້

ຄຳວ່າ ນັ່ງ ໝາຍຄວາມວ່າ ເມື່ອມາຕຸຄາມນັ່ງ ພິກຂຸນັ່ງໃກ້ຫຼືນອນໃກ້ ເມື່ອພິກຂຸນັ່ງ ມາຕຸຄາມນັ່ງໃກ້ຫຼືນອນໃກ້ ຫຼືນັ່ງທັງສອງຄົນ ຫຼືນອນທັງສອງຄົນ

ອຸປາສິກາຊື່ວ່າ ມີວາຈາເຊື່ອຖືໄດ້ ຄື ແມ່ຍິງຜູ້ບັນລຸຜົນ ຜູ້ຕັດສະຣູ້ທຳ ຜູ້ເຂົ້າໃຈສາດສະໜາດີ

ທີ່ຊື່ວ່າ ອຸປາສິກາ ໄດ້ແກ່ ແມ່ຍິງຜູ້ຖືພຣະພຸດເປັນສະຣະນະ ຖືພຣະທຳເປັນສະຣະນະ ຖືພຣະສົງເປັນສະຣະນະ

ຄຳວ່າ ໄດ້ເຫັນ ຄື ໄດ້ພົບເຫັນຕໍ່ໜ້າ

ອຸປາສິກາມີວາຈາເຊື່ອຖືໄດ້ ກ່າວໂທດດ້ວຍອາບັດຢ່າງໃດຢ່າງໜຶ່ງ ບັນດາອາບັດ ໘ ຢ່າງ ຄື ສັງຄາທິເສດ ຫຼື ປາຈິດຕີ ພິກຂຸຍອມຮັບການນັ່ງ ເພິ່ງຖືກປັບອາບັດຢ່າງໃດ ຢ່າງໜຶ່ງ ບັນດາອາບັດ ໘ ຢ່າງ ຄື ສັງຄາທິເສດ ຫຼື ປາຈິດຕີ ອີກປະການໜຶ່ງ ອຸປາສິກາຜູ້ມີວາຈາເຊື່ອຖືໄດ້ນັ້ນ ກ່າວໂທດດ້ວຍອາບັດໃດ ພິກຂຸນັ້ນ ເພິ່ງຖືກປັບດ້ວຍອາບັດນັ້ນ

## ບົດພາຊະນີ

## ປະຕິນຍາຕະກະຣະນະ

## ເຫັນກຳລັງນັ່ງຈັບຕ້ອງກາຍ

[໔໕໕] ຖ້າອຸປາສິການັ້ນກ່າວແນວນີ້ວ່າ “ຂ້ານ້ອຍເຫັນຄູບາກຳລັງນັ່ງຈັບຕ້ອງກາຍກັບມາຕຸຄາມ” ແລະພິກຂຸນັ້ນກໍຍອມຮັບການນັ່ງ ເພິ່ງປັບຕາມອາບັດ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ “ຂ້ານ້ອຍເຫັນຄູບາກຳລັງນັ່ງຈັບຕ້ອງກາຍກັບມາຕຸຄາມ” ຖ້າພິກຂຸນັ້ນກ່າວແນວນີ້ວ່າ “ອາດຕະມານັ່ງແທ້ ແຕ່ບໍ່ໄດ້ຈັບຕ້ອງກາຍ” ເພິ່ງປັບອາບັດຍ້ອນນັ່ງ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ “ຂ້ານ້ອຍເຫັນຄູບາກຳລັງນັ່ງຈັບຕ້ອງກາຍກັບມາຕຸຄາມ” ຖ້າພິກຂຸນັ້ນກ່າວແນວນີ້ວ່າ “ອາດຕະມາບໍ່ໄດ້ນັ່ງ ແຕ່ນອນຢູ່” ເພິ່ງປັບອາບັດຍ້ອນນອນ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ “ຂ້ານ້ອຍເຫັນຄູບາກຳລັງນັ່ງຈັບຕ້ອງກາຍກັບມາຕຸຄາມ” ຖ້າພິກຂຸນັ້ນກ່າວແນວນີ້ວ່າ “ອາດຕະມາບໍ່ໄດ້ນັ່ງ ແຕ່ນອນຢູ່” ບໍ່ເພິ່ງປັບອາບັດ

## ເຫັນກຳລັງນອນຈັບຕ້ອງກາຍ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ “ຂ້ານ້ອຍເຫັນຄູບາກຳລັງນອນຈັບຕ້ອງກາຍກັບມາຕຸຄາມ” ແລະພິກຂຸນັ້ນຍອມຮັບການນອນນັ້ນ ເພິ່ງປັບຕາມອາບັດ ຯລຯ “ອາດຕະມານອນແທ້ ແຕ່ບໍ່ໄດ້ຈັບຕ້ອງກາຍ” ເພິ່ງປັບອາບັດຍ້ອນນອນ ຯລຯ “ອາດຕະມາບໍ່ໄດ້ນອນ ແຕ່ນັ່ງຢູ່” ເພິ່ງປັບອາບັດຍ້ອນນັ່ງ ຯລຯ “ອາດຕະມາບໍ່ໄດ້ນອນ ແຕ່ຢືນຢູ່” ບໍ່ເພິ່ງປັບອາບັດ

## ໄດ້ຍິນກຳລັງນັ່ງເວົ້າກັ້ງວ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍໄດ້ຍິນຄູບາກຳລັງນັ່ງເວົ້າກັ້ງວ ມາຕຸຄາມດ້ວຍວາຈາຊົ່ວຫຍາບ" ແລະພິກຂຸນັ້ນຍອມຮັບການນັ່ງ ເພິ່ງປັບຕາມອາບັດ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍໄດ້ຍິນຄູບາກຳລັງນັ່ງເວົ້າກັ້ງວມາຕຸຄາມດ້ວຍວາຈາຊົ່ວຫຍາບ" ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ອາດຕະມານັ່ງແທ້ ແຕ່ບໍ່ໄດ້ເວົ້າກັ້ງວແມ່ຍິງດ້ວຍວາຈາຊົ່ວຫຍາບ" ເພິ່ງປັບອາບັດຍ້ອນນັ່ງ ฯລฯ "ອາດຕະມາບໍ່ໄດ້ນັ່ງ ແຕ່ນອນຢູ່" ເພິ່ງປັບອາບັດຍ້ອນນອນ ฯລฯ "ອາດຕະມາບໍ່ໄດ້ນັ່ງ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ໄດ້ຍິນກຳລັງນອນເວົ້າກັ້ງວ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍໄດ້ຍິນຄູບາກຳລັງນອນເວົ້າກັ້ງວ ມາຕຸຄາມດ້ວຍວາຈາຊົ່ວຫຍາບ" ແລະພິກຂຸນັ້ນຍອມຮັບການນອນ ເພິ່ງປັບຕາມອາບັດ ฯລฯ "ອາດຕະມານອນແທ້ ແຕ່ບໍ່ໄດ້ເວົ້າກັ້ງວມາຕຸຄາມດ້ວຍວາຈາຊົ່ວຫຍາບ" ເພິ່ງປັບອາບັດຍ້ອນນອນ ฯລฯ "ອາດຕະມາບໍ່ໄດ້ນອນ ແຕ່ນັ່ງຢູ່" ເພິ່ງປັບອາບັດຍ້ອນນັ່ງ ฯລฯ "ອາດຕະມາບໍ່ໄດ້ນອນ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນນັ່ງໃນທີ່ລັບ

[໔໕໖] ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບານັ່ງໃນທີ່ລັບກັບມາຕຸຄາມສອງຕໍ່ສອງ" ແລະພິກຂຸນັ້ນກໍຍອມຮັບການນັ່ງ ເພິ່ງປັບອາບັດຍ້ອນນັ່ງ ฯລฯ "ອາດຕະມາບໍ່ໄດ້ນັ່ງ ແຕ່ນອນຢູ່" ເພິ່ງປັບອາບັດຍ້ອນນອນ ฯລฯ "ອາດຕະມາບໍ່ໄດ້ນັ່ງ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

## ເຫັນນອນໃນທີ່ລັບ

ຖ້າອຸປາສິການັ້ນກ່າວແນວນີ້ວ່າ "ຂ້ານ້ອຍເຫັນຄູບານອນໃນທີ່ລັບກັບມາຕຸຄາມ ສອງຕໍ່ສອງ" ແລະພິກຂຸນັ້ນຍອມຮັບການນອນ ເພິ່ງປັບອາບັດຍ້ອນນອນ ฯລฯ "ອາດຕະມາບໍ່ໄດ້ນອນ ແຕ່ນັ່ງຢູ່" ເພິ່ງປັບອາບັດຍ້ອນນັ່ງ ฯລฯ "ອາດຕະມາບໍ່ໄດ້ນອນ ແຕ່ຢືນຢູ່" ບໍ່ເພິ່ງປັບອາບັດ

ຄຳວ່າ ແມ່ນນີ້ ພຣະຜູ້ມີພຣະພາກເຈົ້າຕັດຫຼຸບສິກຂາບົດກ່ອນ

ຄຳວ່າ ອະນິຍະຕະ ຄື ບໍ່ແນ່ວ່າຈະເປັນສັງຄາທິເສດ ຫຼື ເປັນປາຈິດຕີ

[໔໕໗] ພິກຂຸຍອມຮັບການໄປ ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ

ພິກຂຸຍອມຮັບການໄປ ບໍ່ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸຍອມຮັບການໄປ ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ເພິ່ງປັບອາບັດຍ້ອນການນັ່ງ
ພິກຂຸຍອມຮັບການໄປ ບໍ່ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ບໍ່ເພິ່ງປັບອາບັດ
ພິກຂຸບໍ່ຍອມຮັບການໄປ ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸບໍ່ຍອມຮັບການໄປ ບໍ່ຍອມຮັບການນັ່ງ ຍອມຮັບອາບັດ ເພິ່ງປັບຕາມອາບັດ
ພິກຂຸບໍ່ຍອມຮັບການໄປ ຍອມຮັບການນັ່ງ ບໍ່ຍອມຮັບອາບັດເພິ່ງປັບອາບັດຍ້ອນການນັ່ງ
ພິກຂຸບໍ່ຍອມຮັບການໄປ ບໍ່ຍອມຮັບການນັ່ງ ບໍ່ຍອມຮັບອາບັດ ບໍ່ເພິ່ງປັບອາບັດ

**ທຸຕິຍະອະນິຍະຕະສິກຂາບົດ ຈົບ**

## ບົດສະຫຼຸບ

[໔໔໗] ທ່ານທັງຫຼາຍ ທຳຄືອະນິຍະຕະ ໒ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມທ່ານທັງຫຼາຍໃນທຳຄືອະນິຍະຕະ ໒ ສິກຂາບົດນັ້ນວ່າ “ທ່ານ ທັງຫຼາຍບໍລິສຸດແລ້ວບໍ?”

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ “ທ່ານທັງຫຼາຍບໍລິສຸດແລ້ວບໍ?”

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ “ທ່ານທັງຫຼາຍບໍລິສຸດແລ້ວບໍ?”

ທ່ານທັງຫຼາຍບໍລິສຸດແລ້ວໃນທຳຄືອະນິຍະຕະ ໒ ສິກຂາບົດນີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ລວມສິກຂາບົດທີ່ມີໃນອະນິຍະຕະກັນ

ອະນິຍະຕະກັນມີ ໒ ສິກຂາບົດ ຄື

໑. ປະຖົມອະນິຍະຕະສິກຂາບົດ ວ່າດ້ວຍການນັ່ງໃນທີ່ລັບຕາກັບແມ່ຍິງສອງຕໍ່ສອງ

໒. ທຸຕິຍະອະນິຍະຕະສິກຂາບົດ ວ່າດ້ວຍການນັ່ງໃນທີ່ລັບຫູກັບແມ່ຍິງສອງຕໍ່ສອງ

ພຣະພຸດທະເຈົ້າຜູ້ປະເສີດແລະຜູ້ມີຄວາມຄົງທີ່ ຊົງບັນຍັດໄວ້ດີແລ້ວ

**ອະນິຍະຕະກັນ ຈົບ**